# ພຣະໄຕຣປິດົກພາສາລາວ

ເຫຼັ້ມທີ ໖

# ພຣະວິໄນ

ເຫຼັ້ມທີ ໖

ຈູລະວັກ ພາກ ໑



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄໍາປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທໍາມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈໍານວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກໍາຄ່າໃຊ້ຈ່າຍ ຈົນສໍາເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄໍາສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລໍາພັງພຽງອົງດຽວຢູ່ຫໍທໍາມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສໍາເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສໍາເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສໍານວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນໍາເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄໍານໍາ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄໍາຜິດ ສໍານວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນໍາໃຫ້ລະມັດລະວັງໃນການນໍາໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອໍານວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນໍາໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນໍາເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທໍາຂອງອົງສົມເດັດ ພຣະສໍາມາສໍາພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໖

# ພຣະວິໄນ

## ເຫຼັ້ມທີ ໖

## ຈູລະວັກ ພາກ ໑

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໑. ກໍາມະຂັນທະກະ

## ໑. ຕັດຊະນີຍະກໍາ

### ເລື້ອງພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ

[໑] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ[໑] ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງແລ້ວ ກ່າວແນວນີ້ວ່າ “ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ” ເຮັດໃຫ້ຄວາມໝາງໃຈ ທີ່ຍັງບໍ່ເກີດກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ຈຶ່ງກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານດັ່ງນີ້ບໍ ເຮັດໃຫ້ຄວາມໝາງໃຈ ທີ່ຍັງບໍ່ເກີດ ກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ

## ຊົງປະຊຸມສົງສອບຖາມ

[໔] ຄັ້ງນັ້ນ ພິກຂຸເຫຼົ່ານັ້ນ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸນິສິດຂອງພຣະປັນທຸກະ ແລະພຣະໂລຫິດຕະກະກໍ່ຄວາມ ໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ ດັ່ງນີ້ ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດ ກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດທັງຫຼາຍ ຈຶ່ງກໍ່ຄວາມໝາງໃຈ ຯລຯ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ຯລຯ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍ ຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະ ສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານດັ່ງນີ້ບໍ ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດ ກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ພິກຂຸ

ທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສ ກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ລາງພວກກໍຈະກາຍເປັນອື່ນໄປ

## ຊົງຮັບສັ່ງໃຫ້ລົງຕັດຊະນີຍະກຳ

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ພວກພິກຂຸນິສິດຂອງພຣະປັນທຸກະ ແລະພຣະໂລຫິດຕະກະໂດຍປະການຕ່າງ ໆ ແລ້ວ ຈຶ່ງຕັດໂທດແຫ່ງຄວາມເປັນຄົນລ້ຽງຍາກ ບຳລຸງຍາກ ມັກຫຼາຍ ບໍ່ສັນໂດດ ຄວາມຄຸກຄີ ຄວາມຂີ້ຄ້ານ ຕັດຄຸນແຫ່ງຄວາມເປັນຄົນລ້ຽງງ່າຍ ບຳລຸງງ່າຍ ມັກໜ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດກິເລດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການພາຣົບຄວາມພຽນ ໂດຍປະການຕ່າງ ໆ ຊົງສະແດງທຳມີກະຖາ ໃຫ້ເໝາະສົມໃຫ້ຄ້ອຍຕາມກັບເລື້ອງນັ້ນແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລົງຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ

## ວິທີລົງຕັດຊະນີຍະກຳແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລົງຕັດຊະນີຍະກຳແນວນີ້ ຄື ເບື້ອງຕົ້ນເພິ່ງໂຈດພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ບັດແລ້ວໃຫ້ພິກຂຸເຫຼົ່ານັ້ນໃຫ້ການແລ້ວຈຶ່ງປັບອາບັດ ເມື່ອປັບອາບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໓] “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດ ກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ຖ້າສົງພ້ອມກັນແລ້ວ ເພິ່ງລົງຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ກໍ່ຄວາມໝາງໃຈ ຯລຯ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາ

ພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ໆລໆ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ "ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ" ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ສົງລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງໃດເຫັນດ້ວຍກັບການລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໔ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ກໍ່ຄວາມໝາງໃຈ ໆລໆ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ໆລໆ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າ ແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ສົງລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງໃດເຫັນດ້ວຍກັບການລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ກໍ່ຄວາມໝາງໃຈ ໆລໆ ກໍ່ອະທິກອນໃນສົງດ້ວຍຕົນເອງ ແລະພາກັນເຂົ້າໄປຫາພິກຂຸພວກອື່ນທີ່ກໍ່ຄວາມໝາງໃຈ ໆລໆ ກໍ່ອະທິກອນໃນສົງ ແລ້ວກ່າວແນວນີ້ວ່າ ພິກຂຸອົງນັ້ນຢ່າໄດ້ເອົາຊະນະພວກທ່ານ ທ່ານທັງຫຼາຍຈົ່ງໂຕ້ຕອບໃຫ້ແຂງຂັນ ພວກທ່ານເປັນບັນດິດກວ່າ ສະຫຼຽວສະຫຼາດກວ່າ ເປັນພະຫູສູດກວ່າແລະສາມາດກວ່າພິກຂຸນັ້ນ ຢ່າຢ້ານພິກຂຸນັ້ນ ແມ່ນພວກຂ້ານ້ອຍຈະຖ້າເປັນຝ່າຍພວກທ່ານ ເຮັດໃຫ້ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດຂຶ້ນ ທີ່ເກີດຂຶ້ນແລ້ວກໍຂະຫຍາຍລຸກລາມອອກໄປ ສົງລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງໃດເຫັນດ້ວຍ ກັບການລົງຕັດຊະນິຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຕັດຊະນິຍະກຳສົງລົງແລ້ວແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

# ອະທຳມະກຳມະທະວາທະສະກະ

## ວ່າດ້ວຍຕັດຊະນີຍະກຳທີ່ບໍ່ຊອບທຳ ໑໘ ໝວດ

### ໝວດທີ ໑

[໔] ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑)

### ໝວດທີ ໒

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໒)

### ໝວດທີ ໓

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງໂດຍບໍ່ສອບຖາມ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ລົງຕາມປະຕິຍານ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໖)

## ໝວດທີ ໗

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ

໒. ລົງໂດຍບໍ່ຊອບທຳ

໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໗)

## ໝວດທີ ໘

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ

໒. ລົງໂດຍບໍ່ຊອບທຳ

໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໘)

## ໝວດທີ ໙

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ

໒. ລົງໂດຍບໍ່ຊອບທຳ

໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໙)

## ໝວດທີ ໑໐

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ ໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໐)

## ໝວດທີ ໑໑

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ ໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໑)

## ໝວດທີ ໑໒

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ ໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໒)

**ອະທຳມະກຳມະທະວາທະສະກະ ຈົບ**

## ທຳມະກຳມະທະວາທະສະກະ

## ວ່າດ້ວຍຕັດຊະນີຍະກຳທີ່ຊອບທຳ ໑໘ ໝວດ

### ໝວດທີ ໑

[໕] ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑)

### ໝວດທີ ໒

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໒)

### ໝວດທີ ໓

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງໂດຍສອບຖາມກ່ອນ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ຕັດຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕາມປະຕິຍານ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນິຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໖)

## ໝວດທີ ໗

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ ໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໗)

## ໝວດທີ ໘

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ ໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໘)

## ໝວດທີ ໙

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໙)

## ໝວດທີ ໑໐

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ ໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໐)

## ໝວດທີ ໑໑

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ ໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໑)

## ໝວດທີ ໑໒

ພິກຂຸທັງຫຼາຍ ຕັດຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ ໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດຊະນີຍະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໒)

**ທຳມະກຳມະທະວາທະສະກະ ຈົບ**

## ອາກັງຂະມານະສັກກະ

## ວ່າດ້ວຍສົງມຸ້ງຫວັງຈະລົງຕັດຊະນີຍະກຳ ໕ ໝວດ

### ໝວດທີ ໑

[໕] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍ ອົງ ໓ ຄື

1. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
2. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
3. ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໑)

### ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

1. ມີສີນວິບັດໃນອະທິສີນ
2. ມີອາຈາຣະວິບັດໃນອັດຊາຈານ
3. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໒)

### ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸທີ່ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

1. ກ່າວຕິຕຽນພຣະພຸດທະເຈົ້າ
2. ກ່າວຕິຕຽນພຣະທຳ
3. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໓)

## ໝວດທີ ໘

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ຯລຯ ກໍ່ອະທິກອນໃນສົງ

໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້

໓. ອົງໜຶ່ງຢູ່ຄຸກຄີກັບຄະລຶຫັດດ້ວຍການຄຸກຄີກັບຄະລຶຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໘)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງມີສິນວິບັດໃນອະທິສິນ

໒. ອົງໜຶ່ງມີອາຈາຣະວິບັດໃນອັດຊາຈານ

໓. ອົງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ

໒. ອົງໜຶ່ງກ່າວຕິຕຽນພຣະທຳ

໓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພື່ອລົງຕັດຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໖)

**ອາກັງຂະມານະສັກກະ ຈົບ**

## ອັດຖາຣະສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໑໘ ຂໍ້ໃນຕັດຊະນີຍະກຳ

[໗] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງຕັດຊະນີຍະກຳເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງສອນພິກຂຸນີລົງຕັດຊະນີຍະກຳອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ[១]
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

### ອັດຖາຣະສະວັດຕະໃນຕັດຊະນີຍະກຳ ຈົບ

## ນັບປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບຕັດຊະນີຍະກຳ

[໘] ຄັ້ງນັ້ນ ສົງໄດ້ລົງຕັດຊະນີຍະກຳແກ່ພວກພິກຂຸນີສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ພວກທ່ານຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້

ເຂົ້າໄປຫາພິກຂຸທັງຫຼາຍແລ້ວກ່າວວ່າ "ພວກຂ້ານ້ອຍຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ພວກຂ້ານ້ອຍຈະປະຕິບັດແນວໃດ?

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລະງັບຕັດຊະນີຍະກຳ ແກ່ພວກພິກຂຸນິສິດຂອງພຣະປັນທຸກະ ແລະພຣະໂລຫິດຕະກະເທີ້ນ

## ໝວດທີ ໑

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳ ແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງຕັດຊະນີຍະກຳ
໒. ຕ້ອງອາບັດອື່ນທຳນອງດຽວກັນ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ກະທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ (໓)

**ນັບປະຕິປັດສຳເພຕັບພະອັດຖາຣະສະກະ ຈົບ**

## ປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງເພິ່ງລະງັບຕັດຊະນີຍະກຳ

## ໝວດທີ ໑

[໙] ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ
໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງຕັດຊະນີຍະກຳອີກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ
໗. ບໍ່ໃຫ້ພິກຂຸອື່ນໃຫ້ການ
໘. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ (໓)

**ປະຕິປັດສຳເພຕັບພະອັດຖາຣະສະກະ ຈົບ**

## ວິທີລະງັບຕັດຊະນີຍະກຳແລະກຳມະວາຈາ

[໑໐] ພິກຂຸທັງຫຼາຍ ສົງເພິ່ງລະງັບຕັດຊະນີຍະກຳແນວນີ້ ຄື ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ພວກຂ້ານ້ອຍ

ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ພວກຂ້ານ້ອຍຈຶ່ງຂໍລະງັບຕັດຊະນີຍະກຳ"

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະເຫຼົ່ານີ້ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະເຫຼົ່ານີ້ ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ສົງລະງັບຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະ ແລະພຣະໂລຫິດຕະກະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຯລຯ ທ່ານອົງໃດເຫັນດ້ວຍກັບການລະງັບຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະເຫຼົ່ານີ້ ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ສົງລະງັບຕັດຊນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບຕັດຊະນີຍະກຳແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຕັດຊະນີຍະກຳສົງລະງັບແລ້ວແກ່ພວກພິກຂຸນິສິດຂອງພຣະປັນທຸກະແລະພຣະໂລຫິດຕະກະ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ຕັດຊະນີຍະກຳທີ ໑ ຈົບ**

# ໔. ນິຍະສະກຳ

## ເລື້ອງພິກຂຸເສີຍຍະສະກະ

[໑໑] ສະໄໝນັ້ນ ທ່ານພຣະເສີຍຍະສະກະເປັນຜູ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ມັກຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ

ເປັນຫຍັງພິກຂຸເສີຍຍະສະກະ ຜູ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່ນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸເສີຍຍະສະກະເປັນຄົນໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີ ກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່ ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດນັ້ນ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ພິກຂຸທັງຫຼາຍ ເປັນຫຍັງພິກຂຸເສີຍຍະສະກະ ຜູ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່ນໍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ສົງຈົ່ງລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່

## ວິທີລົງນິຍະສະກຳແລະກຳມະວາຈາ

ສົງເພິ່ງລົງນິຍະສະກຳແບບນີ້ ຄື ເບື້ອງຕົ້ນເພິ່ງໂຈດພິກຂຸເສີຍຍະສະກະ ບັດແລ້ວໃຫ້ທ່ານໃຫ້ການແລ້ວປັບອາບັດ ເມື່ອປັບອາບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໔]ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດ ທີ່ບໍ່ສົມຄວນທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດດຶງເຂົ້າຫາອາບັດເດີມ ໃຫ້ມານັດ ແລະອັບພານຢູ່ ຖ້າສົງພ້ອມກັນແລ້ວ ເພິ່ງລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່ ສົງລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ທ່ານອົງໃດເຫັນດ້ວຍກັບການລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ ທັງ ໆ ທີ່ພວກປະກະຕັດຕະພິກຂຸກໍໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດແລະອັບພານຢູ່ ສົງລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ທ່ານອົງໃດເຫັນດ້ວຍກັບການລົງນິຍະສະກຳແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ฯลฯ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ນິຍະສະກຳ ສົງລົງແລ້ວແກ່ພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

## ອະທຳມະກຳມະທະວາທະສະກະ

## ວ່າດ້ວຍນິຍະສະກຳທີ່ບໍ່ຊອບທຳ ໑໒ ໝວດ

### ໝວດທີ ໑

[໑໘] ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑)

### ໝວດທີ ໒

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມິນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໒)

### ໝວດທີ ໓

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງໂດຍບໍ່ສອບຖາມ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ລົງຕາມປະຕິຍານ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໖)

## ໝວດທີ ໗

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໗)

## ໝວດທີ ໘

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນອາບັດທີ່ເປັນ
໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ៣ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໘)

## ໝວດທີ ໙

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ៣ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໙)

## ໝວດທີ ໑໐

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໐)

## ໝວດທີ ໑໑

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໑)

## ໝວດທີ ໑໒

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ນິຍະສະກໍາທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກໍາ ບໍ່ຊອບດ້ວຍທໍາ ເປັນກໍາບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ (໑໒)

**ອະທໍາມະກໍາມະທະວາທະສະກະ ຈົບ**

## ທໍາມະກໍາມະທະວາທະສະກະ

## ວ່າດ້ວຍນິຍະສະກໍາທີ່ຊອບທໍາ ໑໒ ໝວດ

### ໝວດທີ ໑

[໑໔] ພິກຂຸທັງຫຼາຍ ນິຍະສະກໍາປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ນິຍະສະກໍາທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ (໑)

### ໝວດທີ ໒

ພິກຂຸທັງຫຼາຍ ນິຍະສະກໍາປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

ພິກຂຸທັງຫຼາຍ ນິຍະສະກໍາທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງໂດຍສອບຖາມກ່ອນ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕາມປະຕິຍານ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໖)

## ໝວດທີ ໗

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໗)

## ໝວດທີ ໘

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໘)

## ໝວດທີ ໙

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໙)

## ໝວດທີ ໑໐

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໐)

## ໝວດທີ ໑໑

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໑)

## ໝວດທີ ໑໘

ພິກຂຸທັງຫຼາຍ ນິຍະສະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ນິຍະສະກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ (໑໘)

**ທຳມະກຳມະທະວາທະສະກະ ຈົບ**

### ອາກັງຂະມານະສັກກະ

### ວ່າດ້ວຍສົງມຸ້ງຫວັງຈະລົງນິຍະສະກຳ ໖ ໝວດ

## ໝວດທີ ໑

[໑໕] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ຄື

໑. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ມີສີນວິບັດໃນອະທິສີນ
໒. ມີອາຈາຣະວິບັດໃນອັດຊາຈານ
໓. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

๑. ອົງໜຶ່ງມີສີນວິບັດໃນອະທິສີນ
๒. ອົງໜຶ່ງມີອາຈາຣະວິບັດໃນອັດຊາຈານ
๓. ອົງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸ ๓ ອົງເຫຼົ່ານີ້ແລ (๕)

## ໝວດທີ ๖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸອື່ນອີກ ๓ ອົງ ຄື

๑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ
๒. ອົງໜຶ່ງກ່າວຕິຕຽນພຣະທຳ
๓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງນິຍະສະກຳແກ່ພິກຂຸ ๓ ອົງເຫຼົ່ານີ້ແລ (๖)

**ອາກັງຂະມານະສັກກະ ຈົບ**

## ອັດຖາຣະສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ๑๘ ຂໍ້ໃນນິຍະສະກຳ

## ໝວດທີ ๑

[๑๖] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງນິຍະສະກຳເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນ ດັ່ງນີ້

๑. ບໍ່ເພິ່ງໃຫ້ອຸປະສົມບົດ
๒. ບໍ່ເພິ່ງໃຫ້ນິໄສ
๓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
๔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
๕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນ
๖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງພິກຂຸນີລົງນິຍະສະກຳອີກ
๗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
๘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ

໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ອັດຖາຣະສະວັດຕະໃນນິຍະສະກຳ ຈົບ**

[໑໗] ຄັ້ງນັ້ນ ສົງໄດ້ລົງນິຍະສະກຳພິກຂຸເສີຍຍະສະກະ ໂດຍສັ່ງໃຫ້ກັບໄປຖືນິໄສໃໝ່ ພິກຂຸເສີຍຍະສະກະນັ້ນຖືກສົງລົງນິຍະສະກຳແລ້ວເສບ ຄົບຫາ ເຂົ້າໄປນັ່ງໃກ້ກັນລະຍານະມິດ ຂໍໃຫ້ແນະນຳ ຊັກຖາມຢູ່ ຈຶ່ງເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມຣະມັດລະວັງ ໃຝ່ການສຶກສາ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ເຂົ້າໄປຫາພວກພິກຂຸ ແລ້ວກ່າວວ່າ "ຂ້ານ້ອຍຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລະງັບນິຍະສະກຳ ແກ່ພິກຂຸເສີຍຍະສະກະ

## ນັບປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບນິຍະສະກຳ

## ໝວດທີ ໑

[໑໘] ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ

໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກ
໒. ຕ້ອງອາບັດອື່ນທຳນອງດຽວກັນສົງລົງນິຍະສະກຳ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ອີກແນວໜຶ່ງ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ກະທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ

**ນັບປະຕິປັດສຳເພຕັບພະອັດຖາຣະສະກະ ຈົບ**

# ປະຕິປັດສຳເພຕັບພະອັດຖາຣະສະກະ

# ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງເພິ່ງລະງັບນິຍະສະກຳ

## ໝວດທີ ໑

[໑໗] ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ

ฯลฯ

ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນສົງລົງນິຍະສະກຳອີກ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ

ໆ. ບໍ່ໃຫ້ພິກຂຸອື່ນໃຫ້ການ

໗. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໗ ເຫຼົ່ານີ້ແລ

**ປະຕິປັດສຳເພຕັບພະອັດຖາຣະສະກະ ຈົບ**

## ວິທີລະງັບນິຍະສະກຳແລະກຳມະວາຈາ

[໔໐]ພິກຂຸທັງຫຼາຍ ສົງເພິ່ງລະງັບນິຍະສະກຳແບບນີ້ ຄື ພິກຂຸເສີຍຍະສະກະເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຍ່ອງຍໍ້ ປະນົມມື ກ່າວແບບນີ້ວ່າ

ທ່ານຜູ້ຈະເລີນ ຂ້ານ້ອຍຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບນິຍະສະກຳ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບນິຍະສະກຳ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບນິຍະສະກຳ ສົງລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບນິຍະສະກຳ ສົງລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເສີຍຍະສະກະນີ້ຖືກສົງລົງນິຍະສະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍ

ລະງັບນິຍະສະກຳ ສົງລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບນິຍະສະກຳແກ່ພິກຂຸເສີຍຍະສະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເພິ່ງທັກທ້ວງ

ນິຍະສະກຳ ສົງລະງັບແລ້ວແກ່ພິກຂຸເສີຍຍະສະກະ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ນິຍະສະກຳທີ ໘ ຈົບ**

# ໓. ປັບພາຊະນິຍະກຳ

## ເລື້ອງພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ໑

[໘໑]ສະໄໝນັ້ນ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ[໒] ເປັນຜູ້ຢູ່ປະຈຳໃນອາວາດ ເປັນພິກຂຸອະລັດຊີ ຊົ່ວຊາມ ຢູ່ໃນກິຕາຄີຣີຊົນນະບົດ ພິກຂຸພວກນັ້ນ ປະພຶດບໍ່ເໝາະສົມປານນີ້ ຄື ປຸກໄມ້ດອກເອງແດ່ ໃຊ້ຜູ້ອື່ນປຸກແດ່ ຫົດນ້ຳເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລ ຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດ ເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ຜູ້ອື່ນເຮັດແດ່

ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລລຽງກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ຊໍ່ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພຸ່ມ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ເຊີດ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພວງ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ແຜງປະດັບເອິກ ເພື່ອກຸນລະສະຕີເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໃພ້ຂອງຕະກູນ ເພື່ອຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດແລະຄຸມຜ້າຫົ່ມຮ່ວມກັນແດ່ກັບ ກຸນລະຕີ ກຸນລະທິດາ ກຸນລະກຸມາຣີ ສະໃພ້ຂອງຕະກູນ ຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊົງດອກໄມ້ຂອງຫອມ ແລະເຄື່ອງລູບທາແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳກັບຍິງຟ້ອນລຳແດ່ ຂັບຮ້ອງກັບຍິງຟ້ອນລຳແດ່ ເສບດົນຕີກັບຍິງຟ້ອນລຳແດ່ ເຕັ້ນລຳກັບຍິງຟ້ອນລຳແດ່ ຟ້ອນລຳກັບຍິງຂັບຮ້ອງແດ່ ຂັບຮ້ອງກັບຍິງຂັບຮ້ອງແດ່ ເສບດົນຕີ ກັບຍິງຂັບຮ້ອງແດ່ ເຕັ້ນລຳກັບຍິງຂັບຮ້ອງແດ່ ຟ້ອນລຳກັບຍິງເສບດົນຕີແດ່ ຂັບຮ້ອງ ກັບຍິງເສບດົນຕີແດ່ ເສບດົນຕີກັບຍິງເສບດົນຕີແດ່ ເຕັ້ນລຳກັບຍິງເສບດົນຕີແດ່ ຟ້ອນລຳກັບຍິງເຕັ້ນລຳແດ່ ຂັບຮ້ອງກັບຍິງເຕັ້ນລຳແດ່ ເສບດົນຕີກັບຍິງເຕັ້ນລຳແດ່ ເຕັ້ນລຳ ກັບຍິງເຕັ້ນລຳແດ່ ຫຼິ້ນໝາກຮຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊິງນາງແດ່ ຫຼິ້ນໝາກໄຫວແດ່ ຫຼິ້ນໂຍນບ້ອງແດ່ ຫຼິ້ນໄມ້ຫຶ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປີ້ນລັງກາແດ່ ຫຼິ້ນໄມ້ໝາກປິ່ນແດ່ ຫຼິ້ນຜອງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍ ໆ ແດ່ ຫລິ້ນທະນູນ້ອຍ ໆ ແດ່ ຫຼິ້ນຊຽນທວາຍແດ່ ຫຼິ້ນທວາຍໃຈແດ່ ຫຼິ້ນລຽນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດເພງອາວຸດແດ່ ແລ່ນຜັດຊ້າງແດ່ ແລ່ນຜັດມ້າແດ່ ແລ່ນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນແຂ່ງກັນແດ່ ຜິວປາກແດ່ ຕົບມືແດ່ ປ້ຳກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕິທ່າມກາງເວທີເຕັ້ນລຳແລ້ວເວົ້າກັບຍິງຟ້ອນລຳແນວນີ້ວ່າ "ນາງ ເຈົ້າຈົ່ງຟ້ອນລຳໃນບ່ອນນີ້" ດັ່ງນີ້ແລ້ວ ໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່

## ອຸປາສິກາເລົ່າເລື່ອງໃຫ້ຟັງ

[໔໔] ສະໄໝນັ້ນ ພິກຂຸອົງໜຶ່ງຈຳພັນສາໃນແຄວັນກາສີແລ້ວ ເດີນທາງໄປນະຄອນສາວັດຖີ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ເດີນທາງໄປຈົນເຖິງກິຕາຄີຣີຊົນນະບົດ ເມື່ອເວລາເຊົ້າທ່ານຄອງອັນຕະຣະວາສົກ ຖືບາດແລະຈີວອນໄປບິນທະບາດທີ່ກິຕາຄີຣີຊົນນະບົດ ມີການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກທີ່ໜ້າເຫຼື້ອມໃສ ສາຍຕາແນມທອດລົງ ສົມບູນດ້ວຍອິລິຍາບົດ

ພວກຊາວບ້ານເຫັນພິກຂຸນັ້ນແລ້ວພາກັນກ່າວແນວນີ້ວ່າ "ພິກຂຸນີ້ເປັນໃຜ ເບິ່ງຄ້າຍບໍ່ຄ່ອຍມີກຳລັງ ຄືຄົນອ່ອນແອ ຄືຄົນໜ້າຍູ້ກົ້ມໜ້າ ເມື່ອທ່ານອົງນີ້ເຂົ້າໄປບິນທະບາດ ໃຜນໍຈະຖວາຍອາຫານບິນທະບາດ ສ່ວນພຣະອັດສະຊິແລະພຣະປຸນັບພະສຸກະຂອງພວກເຮົາ ເປັນຄົນອ່ອນໂຍນ ເວົ້າມ່ວນ ອ່ອນຫວານ ຍິ້ມແຍ້ມກ່ອນ ມັກກ່າວວ່າ

ມາເທີ້ນ ແລະມາດີແລ້ວ ບໍ່ກົ້ມໜ້າ ໜ້າຕາຊື່ນບານ ທັກທາຍກ່ອນ ໃຜ ໆ ກໍຢາກຈະຖວາຍອາຫານທ່ານເຫຼົ່ານັ້ນ

ອຸປາສິກາຄົນໜຶ່ງເຫັນພິກຂຸນັ້ນກຳລັງບິນທະບາດໃນກິຕາຄິຣີຊົນນະບົດ ແລ້ວໄດ້ເຂົ້າ ໄປຫາພິກຂຸນັ້ນໄຫວ້ແລ້ວກ່າວກັບທ່ານວ່າ "ພຣະຜູ້ເປັນເຈົ້າໄດ້ອາຫານບິນທະບາດແດ່ບໍ ຂ້ານ້ອຍ

ພິກຂຸນັ້ນຕອບວ່າ "ອາດຕະມາຍັງບໍ່ໄດ້ອາຫານເລີຍ

ອຸປາສິກາກ່າວນິມົນວ່າ "ນິມົນໄປເຮືອນຂ້ານ້ອຍເທີ້ນ ຂ້ານ້ອຍ" ແລ້ວພາພິກຂຸນັ້ນ

ໄປເຮືອນ ນິມົນໃຫ້ສັນແລ້ວຖາມວ່າ "ພຣະຜູ້ເປັນເຈົ້າ ທ່ານຈະໄປໃສ ຂ້ານ້ອຍ"

ພິກຂຸນັ້ນຕອບວ່າ "ຈະເລີນພອນ ອາດຕະມາຈະໄປນະຄອນສາວັດຖີ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ

ອຸປາສິກາກ່າວວ່າ "ທ່ານຂ້ານ້ອຍ ຖ້າເປັນແນວນັ້ນ ຂໍທ່ານຈົ່ງຖວາຍອະພິວາດພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມ ແລະຂໍຈົ່ງຂາບທູນຕາມຄຳເວົ້າຂອງຂ້ານ້ອຍແນວນີ້ດ້ວຍວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ວັດໃນກິຕາຄິຣີຊົນນະບົດຊຸດໂຊມ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເປັນຜູ້ຢູ່ປະຈຳໃນອາວາດ ຢູ່ໃນກິຕາຄິຣີຊົນນະບົດ ເປັນພິກຂຸອະລັດຊີຊົ່ວຊາມພວກທ່ານປະພຶດບໍ່ເໝາະສົມປານນີ້ ຄື ປູກໄມ້ດອກເອງແດ່ ໃຊ້ຜູ້ອື່ນປູກແດ່ ຫົດນ້ຳເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ເຮັດມາໄລຕໍ່ກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ຜູ້ອື່ນເຮັດແດ່

ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລລຽງກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ຊໍ່ ນຳໄປເອງແດ່ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພຸ່ມ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ເຊີດ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພວງ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ແຜງປະດັບເອິກ ເພື່ອກຸນລະຕີ ເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໃພ້ຂອງຕະກູນເພື່ອຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດແລະຄຸມຜ້າຫົ່ມຮ່ວມກັນແດ່ກັບກຸນລະຕີ ກຸນລະທິດາ ກຸນລະກຸມາຣີ ສະໃພ້ຂອງຕະກູນ ຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊົງດອກໄມ້ຂອງຫອມແລະເຄື່ອງລູບທາແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳກັບຍິງຟ້ອນ

ລຳແດ່ ຂັບຮ້ອງກັບຍິງຟ້ອນລຳແດ່ ເສບດົນຕີກັບຍິງຟ້ອນລຳແດ່ ເຕັ້ນລຳກັບຍິງຟ້ອນລຳແດ່ ຟ້ອນລຳກັບຍິງຂັບຮ້ອງແດ່ ຂັບຮ້ອງກັບຍິງຂັບຮ້ອງແດ່ ເສບດົນຕີ ກັບຍິງຂັບຮ້ອງແດ່ ເຕັ້ນລຳກັບຍິງຂັບຮ້ອງແດ່ ຟ້ອນລຳກັບຍິງເສບດົນຕີແດ່ ຂັບຮ້ອງກັບຍິງເສບດົນຕີແດ່ ເສບດົນຕີກັບຍິງເສບດົນຕີແດ່ ເຕັ້ນລຳກັບຍິງເສບດົນຕີແດ່ ຟ້ອນລຳກັບຍິງເຕັ້ນລຳແດ່ ຂັບຮ້ອງກັບຍິງເຕັ້ນລຳແດ່ ເສບດົນຕີກັບຍິງເຕັ້ນລຳແດ່ ເຕັ້ນລຳກັບຍິງເຕັ້ນລຳແດ່ ຫຼິ້ນໝາກຣຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊິງນາງແດ່ ຫຼິ້ນໝາກໄຫວແດ່ ຫຼິ້ນໂຍນບ້ວງແດ່ ຫຼິ້ນໄມ້ຫົ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປິ້ນຫຼັງກາແດ່ ຫຼິ້ນໄມ້ໝາກປີ່ນແດ່ ຫຼິ້ນຜອງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍ ໆ ແດ່ ຫຼິ້ນທະນູນ້ອຍ ໆ ແດ່ ຫຼິ້ນຊຽນທວາຍແດ່ ຫຼິ້ນທວາຍໃຈແດ່ ຫຼິ້ນລຽນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດເພງອາວຸດແດ່ ແລ່ນຜັດຊ້າງແດ່ ແລ່ນຜັດມ້າແດ່ ແລ່ນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນແຂ່ງກັນແດ່ ຜິວປາກແດ່ ຕົບມືແດ່ ປ້ຳກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕິທ່າມກາງເວທີເຕັ້ນລຳແລ້ວເວົ້າກັບຍິງ ຟ້ອນລຳແນວນີ້ວ່ານາງ ເຈົ້າຈົ່ງຟ້ອນລຳໃນບ່ອນນີ້ ດັ່ງນີ້ແລ້ວ ໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່

ແມ່ນພວກຊາວບ້ານທີ່ເຄີຍສັດທາ ເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາ ບໍ່ເຫຼື້ອມໃສ ທານ ທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ ທາຍກະທາຍິກາເຊົາຖວາຍແລ້ວ ພິກຂຸຜູ້ມີສີນພາກັນຈາກໄປ ພວກພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ຂໍປະທານວະໂຣກາດເທີ້ນຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າໂຜດສົ່ງພິກຂຸທັງຫຼາຍໄປສູ່ກີຕາຄິຣີຊົນນະບົດເພື່ອວັດຈະໄດ້ຕັ້ງໝັ້ນຢູ່ສືບໄປໃນບ່ອນນັ້ນ"

ພິກຂຸນັ້ນຮັບຄຳຂອງອຸປາສົກແລ້ວເດີນທາງໄປທາງນະຄອນສາວັດຖີ ໄປເຖິງນະຄອນສາວັດຖີ ເຖິງ ພຣະເຊຕະວັນອາຮາມຂອງອະນາຖະບິນດິກະເສດຖີໂດຍລຳດັບ ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້ານັ່ງລົງໃນທີ່ສົມຄວນ

## ພຸດທະປະເພນີ

ອັນການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ຊົງປາໄສກັບພຣະອາຄັນຕຸກະທັງຫຼາຍນັ້ນເປັນພຸດທະປະເພນີ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸນັ້ນວ່າ "ພິກຂຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທ່ານເດີນທາງມາໂດຍບໍ່ລຳບາກບໍ ທ່ານມາຈາກໃສ"

ພິກຂຸນັ້ນຂາບທູນວ່າ "ສະບາຍດີ ຂ້ານ້ອຍ ພໍເປັນຢູ່ໄດ້ ຂ້ານ້ອຍ ຂ້າພຣະອົງເດີນທາງມາໂດຍບໍ່ລຳບາກ ຂ້ານ້ອຍ ຂ້າພຣະອົງຈຳພັນສາໃນແຄວັນກາສີ ເມື່ອຈະມາເຝົ້າພຣະອົງທີ່ເມືອງນີ້ເດີນທາງຜ່ານກີຕາຄິຣີຊົນນະບົດ ເວລາເຊົ້າຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນ

ທະບາດໃນກີຕາຄິຣີຊົນນະບົດ ອຸປາສົກຄົນໜຶ່ງ ເຫັນຂ້າພຣະອົງກຳລັງທ່ຽວບິນທະບາດ ເຂົ້າມາຫາ ໄຫວ້ແລ້ວຖາມວ່າ ພຣະຜູ້ເປັນເຈົ້າ ໄດ້ອາຫານບິນທະບາດແດ່ບໍ ຂ້ານ້ອຍ ຂ້າພຣະອົງຕອບວ່າ ອາດຕະມາຍັງບໍ່ໄດ້ອາຫານເລີຍ ອຸປາສົກກ່າວນິມົນວ່າ ນິມົນໄປເຮືອນຂ້ານ້ອຍເທີ້ນຂ້ານ້ອຍ ແລ້ວພາຂ້າພຣະອົງໄປເຮືອນ ນິມົນໃຫ້ສັນແລ້ວຖາມວ່າ ພຣະຜູ້ເປັນເຈົ້າ ທ່ານຈະໄປໄສ ຂ້ານ້ອຍ ຂ້າພຣະອົງ ຕອບວ່າ ຈະເລີນພອນ ອາດຕະມາຈະໄປນະຄອນສາວັດຖີ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ເຂົາກ່າວວ່າ ທ່ານຂ້ານ້ອຍ ຖ້າເປັນແນວນັ້ນ ຂໍທ່ານຈົ່ງຖວາຍບັງຄົມພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະຂໍຈົ່ງຂາບທູນຕາມຄຳເວົ້າຂອງຂ້ານ້ອຍແນວນີ້ດ້ວຍວ່າ ຂ້າແຕ່ພຣະອົງຜູ້ຈະເລີນ ວັດໃນກີຕາຄິຣີຊົນນະບົດຊຸດໂຊມ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເປັນຜູ້ຢູ່ປະຈຳໃນອາວາດ ຢູ່ໃນກີຕາຄິຣີຊົນນະບົດ ເປັນພິກຂຸອະລັດຊີຊົ່ວຊາມ ພວກທ່ານປະພຶດບໍ່ເໝາະສົມປານນີ້ ຄື ປຸກໄມ້ດອກເອງແດ່ ໃຊ້ຜູ້ອື່ນປຸກແດ່ ໆລໆ ປະພຶດບໍ່ເໝາະສົມຕ່າງ ໆ ແດ່ ແມ່ນພວກຊາວບ້ານທີ່ເຄີຍສັດທາ ເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາ ບໍ່ເຫຼື້ອມໃສ ທານທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ຫາຍົກຫາຍິກາເຊົາຖວາຍແລ້ວ ພິກຂຸຜູ້ມີສີນພາກັນຈາກໄປ ພວກພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ຂໍປະທານອະໄຣກາດເທີ້ນຂ້ານ້ອຍ ຂໍພຣະ ຜູ້ມີພຣະພາກໂຜດສົ່ງພິກຂຸທັງຫຼາຍໄປສູ່ກີຕາຄິຣີຊົນນະບົດ ເພື່ອວັດຈະໄດ້ຕັ້ງໝັ້ນຢູ່ສືບໄປໃນບ່ອນນັ້ນ ຂ້າພຣະອົງມາຈາກກີຕາຄິຣີຊົນນະບົດນັ້ນ ຂ້ານ້ອຍ"

## ຊົງສອບຖາມແລ້ວຕຳໜິ

[໔໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເປັນຜູ້ຢູ່ປະຈຳໃນອາວາດ ເປັນພິກຂຸອະລັດຊີຊົ່ວຊາມ ຢູ່ໃນກີຕາຄິຣີຊົນນະບົດ ປະພຶດບໍ່ເໝາະສົມປານນີ້ ຄື ປຸກໄມ້ດອກເອງແດ່ ໃຊ້ຜູ້ອື່ນປຸກແດ່ ໆລໆ ປະພຶດບໍ່ເໝາະສົມຕ່າງ ໆ ແດ່ແມ່ນພວກຊາວບ້ານທີ່ເຄີຍສັດທາ ເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາ ບໍ່ເຫຼື້ອມໃສ ທານທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ຫາຍົກຫາຍິກາເຊົາຖວາຍແລ້ວ ພິກຂຸຜູ້ມີສີນທັງຫຼາຍພາກັນຈາກໄປ ພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ

ແມ່ນບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ໆລໆ ບໍ່ຄວນເຮັດ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງປະພຶດ ບໍ່ເໝາະສົມແນວນີ້ ຄື ປຸກໄມ້ດອກເອງແດ່ ໃຊ້ຜູ້ອື່ນປຸກແດ່ ຫົດນ້ຳເອງແດ່ ໃຊ້ຜູ້ອື່ນຫົດແດ່ ເກັບດອກໄມ້ເອງແດ່ ໃຊ້ຜູ້ອື່ນເກັບແດ່ ຮ້ອຍດອກໄມ້ເອງແດ່ ໃຊ້ຜູ້ອື່ນຮ້ອຍແດ່ ເຮັດມາໄລຕໍ່ກ້ານ

ເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດມາໄລລຽງກ້ານເອງແດ່ ໃຊ້ຜູ້ອື່ນເຮັດແດ່ ຈັດດອກໄມ້ຊໍ່ເອງແດ່ ໃຊ້ຜູ້ອື່ນຈັດແດ່ ເຮັດດອກໄມ້ພຸ່ມເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ເຊີດເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ພວງເອງແດ່ ໃຊ້ຜູ້ອື່ນເຮັດແດ່ ເຮັດດອກໄມ້ແຜງປະດັບເອິກເອງແດ່ ໃຊ້ຜູ້ອື່ນເຮັດແດ່

ພິກຂຸພວກນັ້ນນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລຕໍ່ກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງມາໄລລຽງກ້ານ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ຊໍ່ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພຸ່ມ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ເຊີດ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ເຊິ່ງດອກໄມ້ພວງ ນຳໄປເອງແດ່ ໃຊ້ຜູ້ອື່ນນຳໄປແດ່ ເຊິ່ງດອກໄມ້ແຜງປະດັບເອິກ ເພື່ອກຸນລະຕີ ເພື່ອກຸນລະທິດາ ເພື່ອກຸນລະກຸມາຣີ ເພື່ອສະໃພ້ຂອງຕະກູນ ເພື່ອຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນພາຊະນະດຽວກັນແດ່ ດື່ມນ້ຳໃນໂອໃບດຽວກັນແດ່ ນັ່ງເທິງອາສະນະດຽວກັນແດ່ ນອນເທິງຕຽງດຽວກັນແດ່ ນອນຮ່ວມເຄື່ອງປູລາດດຽວກັນແດ່ ນອນຄຸມຜ້າຫົ່ມຜືນດຽວກັນແດ່ ນອນຮ່ວມເຄື່ອງປູລາດແລະຄຸມຜ້າຫົ່ມຮ່ວມກັນແດ່ກັບກຸນລະຕີ ກຸນລະທິດາ ກຸນລະກຸມາຣີ ສະໃພ້ຂອງຕະກູນ ຂ້າທາດຍິງໃນຕະກູນ

ພິກຂຸພວກນັ້ນສັນອາຫານໃນເວລາວິການແດ່ ດື່ມນ້ຳເມົາແດ່ ທັດຊິງດອກໄມ້ຂອງຫອມແລະເຄື່ອງລູບທາແດ່ ຟ້ອນລຳແດ່ ຂັບຮ້ອງແດ່ ເສບດົນຕີແດ່ ເຕັ້ນລຳແດ່ ຟ້ອນລຳກັບຍິງຟ້ອນລຳແດ່ ຂັບຮ້ອງກັບຍິງຟ້ອນລຳແດ່ ເສບດົນຕີກັບຍິງຟ້ອນລຳແດ່ ເຕັ້ນລຳກັບຍິງຟ້ອນລຳແດ່ ຟ້ອນລຳກັບຍິງຂັບຮ້ອງແດ່ ຂັບຮ້ອງກັບຍິງຂັບຮ້ອງແດ່ ເສບດົນຕີກັບຍິງຂັບຮ້ອງແດ່ ເຕັ້ນລຳກັບຍິງຂັບຮ້ອງແດ່ ຟ້ອນລຳກັບຍິງເສບດົນຕີແດ່ ຂັບຮ້ອງກັບຍິງເສບດົນຕີແດ່ ເສບດົນຕີກັບຍິງເສບດົນຕີແດ່ ເຕັ້ນລຳກັບຍິງເສບດົນຕີແດ່ ຟ້ອນລຳກັບຍິງເຕັ້ນລຳແດ່ ຂັບຮ້ອງກັບຍິງເຕັ້ນລຳແດ່ ເສບດົນຕີກັບຍິງເຕັ້ນລຳແດ່ ເຕັ້ນລຳກັບຍິງເຕັ້ນລຳແດ່ ຫຼິ້ນໝາກຣຸກແຖວລະ ໘ ຕາແດ່ ແຖວລະ ໑໐ ຕາແດ່ ຫຼິ້ນໝາກເກັບແດ່ ຫຼິ້ນຊີງນາງແດ່ ຫຼິ້ນໝາກໄຫວແດ່ ຫຼິ້ນໂຍນບ້ອງແດ່ ຫຼິ້ນໄມ້ຫຶ່ງແດ່ ຫຼິ້ນຟາດໃຫ້ເປັນຮູບຕ່າງ ໆ ແດ່ ຫຼິ້ນສະກາແດ່ ຫຼິ້ນເປົ່າໃບໄມ້ແດ່ ຫຼິ້ນໄຖນ້ອຍ ໆ ແດ່ ຫຼິ້ນປີ້ນຫຼັງກາແດ່ ຫຼິ້ນໄມ້ໝາກປືນແດ່ ຫຼິ້ນຜອງຊາຍດ້ວຍໃບໄມ້ແດ່ ຫຼິ້ນລົດນ້ອຍ ໆ ແດ່ ຫຼິ້ນທະນູນ້ອຍ ໆ ແດ່ ຫຼິ້ນຂຽນທວາຍແດ່ ຫຼິ້ນທວາຍໃຈແດ່ ຫຼິ້ນລຽນຄົນພິການແດ່ ຫັດຂີ່ຊ້າງແດ່ ຫັດຂີ່ມ້າແດ່ ຫັດຂີ່ລົດແດ່ ຫັດຍິງທະນູແດ່ ຫັດເພງອາວຸດແດ່ ແລ່ນຜັດຊ້າງແດ່ ແລ່ນຜັດມ້າແດ່ ແລ່ນຜັດລົດແດ່ ແລ່ນຂັບກັນແດ່ ແລ່ນແຂ່ງກັນແດ່ ຜິວປາກແດ່ ຕົບມືແດ່ ປ້ຳກັນແດ່ ຊົກມວຍແດ່ ປູລາດຜ້າສັງຄາຕິທ່າມກາງເວທີເຕັ້ນລຳແລ້ວເວົ້າ ກັບຍິງຟ້ອນລຳແນວນີ້ວ່ານາງ ເຈົ້າຈົ່ງຟ້ອນລຳໃນບ່ອນນີ້ ດັ່ງນີ້ແລ້ວ ໃຫ້ການຄຳນັບແດ່ ປະພຶດບໍ່ເໝາະສົມຕ່າງ ໆ ແດ່

ແມ່ນພວກຊາວບ້ານທີ່ເຄີຍສັດທາ ເຫຼື້ອມໃສ ແຕ່ດຽວນີ້ບໍ່ສັດທາ ບໍ່ເຫຼື້ອມໃສ ທານ ທີ່ເຄີຍຖວາຍປະຈຳແກ່ສົງ ບັດນີ້ທາຍົກທາຍິກາໄດ້ເຊົາຖວາຍແລ້ວ ພິກຂຸຜູ້ມີສີນທັງຫຼາຍ ພາກັນຈາກໄປ ພວກພິກຂຸຜູ້ຊົ່ວຊາມຢູ່ຄອບຄອງ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ

## ຮັບສັ່ງໃຫ້ລົງປັບພາຊະນີຍະກຳ

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຕັດຮຽກພຣະສາຣີບຸດແລະພຣະໂມກຄັນລານະມາຮັບສັ່ງວ່າ "ໄປເທີ້ນ ສາຣີບຸດ ໂມກຄັນລານະ ທ່ານທັງສອງຈົ່ງໄປກີຕາຄີຣີຊົນນະບົດ ຈົ່ງລົງປັບພາຊະນີຍະກຳແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກີຕາຄີຣີຊົນນະບົດ ຍ້ອນພິກຂຸພວກນັ້ນເປັນສັດທິວິຫາຣິກຂອງທ່ານທັງສອງ

ພຣະສາຣີບຸດແລະພຣະໂມກຄັນລານະຂາບທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຈະລົງປັບພາຊະນີຍະກຳແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກີຕາຄີຣີຊົນນະບົດໄດ້ແນວໃດ ຍ້ອນພວກທ່ານດຸຮ້າຍ ຫຍາບຄາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານທັງສອງຈົ່ງໄປກັບພິກຂຸຫຼາຍ ໆ ອົງ

ພຣະເຖຣະທັງສອງ ທູນຮັບສະໜອງພຣະພຸດທະດຳຣັດແລ້ວ

## ວິທີລົງປັບພາຊະນີຍະກຳແລະກຳມະວາຈາລົງປັບພາຊະນີຍະກຳ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ສົງເພິ່ງລົງປັບພາຊະນີຍະກຳແນວນີ້ ຄືເບື້ອງຕົ້ນ ເພິ່ງໂຈດພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ບັດແລ້ວໃຫ້ພິກຂຸເຫຼົ່ານັ້ນໃຫ້ການແລ້ວ ຈຶ່ງປັບອາບັດ ເມື່ອປັບອາບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໔໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ໒ ອົງນີ້ ປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຊົ່ວຊາມຂອງພິກຂຸເຫຼົ່ານັ້ນ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວແລະຕະກູນທັງຫຼາຍທີ່ຖືກພິກຂຸເຫຼົ່ານັ້ນປະທຸດສະຮ້າຍ ເຂົາກໍໄດ້ເຫັນ ແລະໄດ້ຍິນກັນທົ່ວ ຖ້າສົງພ້ອມກັນແລ້ວກໍເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກີຕາຄີຣີຊົນນະບົດໂດຍປະກາດວ່າ ພິກຂຸຊື່ອັດສະຊິແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກີຕາຄີຣີຊົນນະບົດ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເຫຼົ່ານີ້ປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຂອງພິກຂຸເຫຼົ່ານັ້ນ ເຂົາໄດ້ເຫັນ ແລະໄດ້ຍິນກັນທົ່ວ ແລະຕະກູນທັງຫຼາຍທີ່ຖືກພິກຂຸເຫຼົ່ານັ້ນປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ສົງລົງປັບພາຊະນີຍະກຳພວກພິກຂຸຊື່ອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດ ໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ" ທ່ານອົງໃດເຫັນດ້ວຍກັບການລົງປັບພາຊະນີຍະກຳແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດໂດຍປະກາດວ່າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໘ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເຫຼົ່ານີ້ປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຂອງພິກຂຸເຫຼົ່ານັ້ນ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ແລະຕະກູນທັງຫຼາຍທີ່ຖືກພິກຂຸເຫຼົ່ານັ້ນປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ສົງລົງປັບພາຊະນີຍະກຳພວກພິກຂຸ ຊື່ອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດໂດຍປະກາດວ່າ "ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ" ທ່ານອົງໃດເຫັນດ້ວຍກັບການລົງປັບພາຊະນີຍະກຳ ແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດໂດຍປະກາດວ່າ ພິກຂຸຊື່ວ່າ ອັດສະຊິແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໙ ຂ້າພະເຈົ້າກໍກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະເຫຼົ່ານີ້ປະທຸດສະຮ້າຍຕະກູນ ປະພຶດຊົ່ວຊາມ ຄວາມປະພຶດຂອງພິກຂຸເຫຼົ່ານັ້ນ ເຂົາໄດ້ເຫັນແລະໄດ້ຍິນກັນທົ່ວ ແລະຕະກູນທັງຫຼາຍທີ່ຖືກພິກຂຸ ເຫຼົ່ານັ້ນປະທຸດສະຮ້າຍ ເຂົາກໍໄດ້ເຫັນແລະໄດ້ຍິນກັນທົ່ວ ສົງລົງປັບພາຊະນີຍະກຳພວກພິກຂຸ ຊື່ອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດໂດຍປະກາດວ່າ ພິກຂຸຊື່ວ່າອັດສະຊິ ແລະປຸນັບພະສຸກະ ບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ ທ່ານອົງໃດເຫັນດ້ວຍກັບການລົງປັບພາຊະນີຍະກຳ ແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກິຕາຄີຣີຊິນນະບົດໂດຍປະກາດວ່າ ພິກຂຸຊື່ວ່າ ອັດສະຊິແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ປັບພາຊະນີຍະກຳໃຫ້ໄປຈາກກິຕາຄີຣີຊິນນະບົດ ສົງລົງແລ້ວແກ່ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະ ໂດຍປະກາດວ່າ ພິກຂຸຊື່ວ່າອັດສະຊິແລະປຸນັບພະສຸກະບໍ່ເພິ່ງຢູ່ໃນກິຕາຄີຣີຊິນນະບົດ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ອະທຳມະກຳມະທະວາທະສະກະ

## ວ່າດ້ວຍປັບພາຊະນີຍະກຳທີ່ບໍ່ຊອບທຳ ໑໔ ໝວດ

### ໝວດທີ ໑

[໔໕]ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໔. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

### ໝວດທີ ໔

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າ ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໔. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

### ໝວດທີ ໓

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໔. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໒

ພິກຂຸທັງຫຼາຍ ປັບພາຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປັບພາຊະນິຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ປັບພາຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງໂດຍບໍ່ສອບຖາມ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໖

ພິກຂຸທັງຫຼາຍ ປັບພາຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ລົງຕາມປະຕິຍານ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ປັບພາຊະນິຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໘

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໐

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໑

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໒

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທໍາ
໓. ສົງແບ່ງພວກກັນລົງ ໆລໆ

**ອະທໍາມະກໍາມະທະວາທະສະກະ ຈົບ**

## ທໍາມະກໍາມະທະວາທະສະກະ

## ວ່າດ້ວຍປັບພາຊະນີຍະກໍາທີ່ຊອບທໍາ ໑໒ ໝວດ

### ໝວດທີ ໑

[໒໓] ພິກຂຸທັງຫຼາຍ ປັບພາຊະນີຍະກໍາປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ ໆລໆ

### ໝວດທີ ໒

ພິກຂຸທັງຫຼາຍ ປັບພາຊະນີຍະກໍາປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

ພິກຂຸທັງຫຼາຍ ປັບພາຊະນີຍະກໍາປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ

### ໝວດທີ ໓

ພິກຂຸທັງຫຼາຍ ປັບພາຊະນີຍະກໍາປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ

໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ

໓. ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໔

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໕

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງໂດຍສອບຖາມກ່ອນ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໖

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຕາມປະຕິຍານ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໘

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໙

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໒

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປັບພາຊະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

**ທຳມະກຳມະທະວາທະສະກະ ຈົບ**

## ອາກັງຂະມານະຈຸດທະສະກະ

ວ່າດ້ວຍສົງມຸ້ງຫວັງຈະລົງປັບພາຊະນີຍະກຳ ໑໔ ໝວດ

## ໝວດທີ ໑

[໔໗] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບ ດ້ວຍອົງ ໓ ຄື

໑. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນ ໃນສົງ
໒. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແບບໜຶ່ງ ຄື

໑. ມີສິນວິບັດໃນອະທິສິນ
໒. ມີອາຈາຣະວິບັດໃນອັດຊາຈານ
໓. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແບບໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແບບໜຶ່ງ ຄື

໑. ຫຼົ້ນຄະນອງກາຍ

໒. ຫຼົ້ນຄະນອງວາຈາ

໓. ຫຼົ້ນຄະນອງທັງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ປະພຶດບໍ່ສົມຄວນທາງກາຍ

໒. ປະພຶດບໍ່ສົມຄວນທາງວາຈາ

໓. ປະພຶດບໍ່ສົມຄວນທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ທຳລາຍພຣະບັນຍັດທາງກາຍ[1]

໒. ທຳລາຍພຣະບັນຍັດທາງວາຈາ

໓. ທຳລາຍພຣະບັນຍັດທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໖)

## ໝວດທີ ໗

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ປະກອບມິດສາຊີບທາງກາຍ

໒. ປະກອບມິດສາຊີບທາງວາຈາ[១]

໓. ປະກອບມິດສາຊີບທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໗)

## ໝວດທີ ໘

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ

໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້

໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ ແລ (໘)

## ໝວດທີ ໙

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງມີສີນວິບັດໃນອະທິສີນ

໒. ອົງໜຶ່ງມີອາຈາຣະວິບັດໃນອັດຊາຈານ

໓. ອົງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໙)

## ໝວດທີ ໑໐

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ

໒. ອົງໜຶ່ງກ່າວຕິຕຽນພຣະທຳ

໓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໑໐)

## ໝວດທີ ໑໑

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງຫຼິ້ນຄະນອງກາຍ
໒. ອົງໜຶ່ງຫຼິ້ນຄະນອງວາຈາ
໓. ອົງໜຶ່ງຫຼິ້ນຄະນອງທັງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໑໑)

## ໝວດທີ ໑໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງປະພຶດບໍ່ສົມຄວນທາງກາຍ
໒. ອົງໜຶ່ງປະພຶດບໍ່ສົມຄວນທາງວາຈາ
໓. ອົງໜຶ່ງປະພຶດບໍ່ສົມຄວນທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໑໒)

## ໝວດທີ ໑໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງທຳລາຍພຣະບັນຍັດທາງກາຍ
໒. ອົງໜຶ່ງທຳລາຍພຣະບັນຍັດທາງວາຈາ
໓. ອົງໜຶ່ງທຳລາຍພຣະບັນຍັດທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໑໓)

## ໝວດທີ ໑໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງປະກອບມິດສາຊີບທາງກາຍ
໒. ອົງໜຶ່ງປະກອບມິດສາຊີບທາງວາຈາ

໓. ອີງໜຶ່ງປະກອບມິດສາຊີບທັງທາງກາຍແລະວາຈາ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປັບພາຊະນີຍະກຳແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໑໔)

**ອາກັງຂະມານະຈຸດທະສະກະ ຈົບ**

## ອັດຖາຣະສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໑໘ ຂໍ້ໃນປັບພາຊະນີຍະກຳ

[໔໘] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງປັບພາຊະນີຍະກຳເພິ່ງປະພຶດຊອບ ການປະຊອບຖືກໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໔. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງສັ່ງສອນພິກຂຸນີລົງປັບພາຊະນີຍະກຳອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໔. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ອັດຖາຣະສະວັດຕະໃນປັບພາຊະນີຍະກຳ ຈົບ**

[໔໗] ຄັ້ງນັ້ນ ພິກຂຸສົງມີພຣະສາຣີບຸດກັບພຣະໂມກຄັນລານະເປັນປະທານເດີນທາງ ໄປກີຕາຄີຣີຊົນນະບົດ ໄດ້ລົງປັບພາຊະນີຍະກຳແກ່ພິກຂຸຊື່ອັດສະຊິແລະປຸນັບພະສຸກະໃຫ້ໄປຈາກກີຕາ ຄີຣີຊົນນະບົດວ່າ "ພິກຂຸຊື່ອັດສະຊິແລະປຸນັບພະສຸກະບໍ່ຄວນຢູ່ໃນກີຕາຄີຣີຊົນນະບົດ

ພິກຂຸຊື່ອັດສະຊິແລະປຸນັບພະສຸກະ ຖືກສົງລົງປັບພາຊະນີຍະກຳແລ້ວກໍຍັງບໍ່ຍອມປະພຶດຊອບ ບໍ່ຫາຍຈອງຫອງ ບໍ່ຍອມກັບໂຕ ບໍ່ຂໍຂະມາພວກພິກຂຸ ຍັງດ່າກ່າວໂທດກາຣົກສົງ[໑] ໃສ່ຄວາມວ່າເຮັດຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຫຼີກໄປແດ່ ສິກໄປແດ່

ພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຊື່ ອັດສະຊິແລະປຸນັບພະສຸກະຖືກສົງລົງປັບພາຊະນີຍະກຳແລ້ວກໍຍັງບໍ່ຍອມປະພຶດຊອບ ບໍ່ຫາຍຈອງຫອງ ບໍ່ຍອມກັບໂຕ ບໍ່ຂໍຂະມາພວກພິກຂຸ ຍັງດ່າກ່າວໂທດກາຣົກສົງ ໃສ່ຄວາມວ່າເຮັດຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຫຼີກໄປແດ່ ສິກໄປແດ່" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸຊື່ອັດສະຊິແລະປຸນັບພະສຸກະ ຖືກສົງລົງປັບພຊານີຍະກຳແລ້ວຍັງບໍ່ຍອມປະພຶດຊອບ ບໍ່ຫາຍຈອງຫອງ ບໍ່ຍອມກັບໂຕ ບໍ່ຂໍຂະມາພວກພິກຂຸ ຍັງດ່າກ່າວໂທດກາຣົກສົງ ໃສ່ຄວາມວ່າເຮັດຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຫຼີກໄປແດ່ ສິກໄປແດ່ ແມ່ນບໍ?"

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຖືກສົງລົງປັບພຊານີຍະກຳແລ້ວຍັງບໍ່ຍອມປະພຶດຊອບ ບໍ່ຫາຍຈອງຫອງ ບໍ່ຍອມກັບໂຕ ບໍ່ຂໍຂະມາພິກຂຸທັງຫຼາຍ ຍັງດ່າກ່າວໂທດກາຣົກສົງ ໃສ່ຄວາມວ່າເຮັດຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຫຼີກໄປແດ່ ສິກໄປແດ່ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແບບນັ້ນ ສົງຈົ່ງລະງັບປັບພາຊະນີຍະກຳ

## ນັບປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໗ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບປັບພາຊະນີຍະກຳ

### ໝວດທີ ໑

[໓໐] ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ

໒. ໃຫ້ນິໄສ

໓. ໃຊ້ສາມະເນນອຸປັດຖາກ

໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ

໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

### ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກ

໒. ຕ້ອງອາບັດອື່ນທຳນອງດຽວກັນສົງລົງປັບພາຊະນີຍະກຳອີກ

໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ

໔. ຕຳໜິກຳ

໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

### ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໗ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ

໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ

໓. ກະທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້

**ນັບປະຕິປັດສຳເພຕັບພະອັດຖາຣະສະກະໃນປັບພາຊະນີຍະກຳ ຈົບ**

## ປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງເພິ່ງລະງັບປັບພາຊະນີຍະກຳ

### ໝວດທີ ໑

[໓໑] ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ
໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

### ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນສົງລົງປັບພາຊະນີຍະກຳອີກ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ
໗. ບໍ່ໃຫ້ພິກຂຸອື່ນໃຫ້ການ
໘. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ

**ປະຕິປັດສຳເພຕັບພະອັດຖາຣະສະກະໃນປັບພາຊະນີຍະກຳ ຈົບ**

## ວິທີລະງັບປັບພາຊະນີຍະກຳແລະກຳມະວາຈາ

[໓໒] ພິກຂຸທັງຫຼາຍ ສົງເພິ່ງລະງັບປັບພາຊະນີຍະກຳແນວນີ້ ຄື ພິກຂຸຜູ້ຖືກສົງ ລົງປັບພາຊະນີຍະກຳ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຖືກສົງລົງປັບພາຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບປັບພາຊະນີຍະກຳ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ
ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງລົງປັບພາຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປັບພາຊະນີຍະກຳ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບປັບພາຊະນີຍະກຳແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງລົງປັບພາຊະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປັບພາຊະນີຍະກຳ ສົງລະງັບປັບພາຊະນີຍະ

ກໍາແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບປັບພາຊະນີຍະກໍາແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ໆລໆ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ ຖືກສົງລົງປັບພາຊະນີຍະກໍາແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປັບພາຊະນີຍະກໍາ ສົງລະງັບປັບພາຊະນີຍະກໍາແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບປັບພາຊະນີຍະກໍາແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ປັບພາຊະນີຍະກໍາສົງລະງັບແລ້ວແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ປັບພາຊະນີຍະກໍາທີ ໓ ຈົບ**

# ໔. ປະຕິສາຣະນີຍະກໍາ

# ເລື້ອງພຣະສຸທໍາ

[໓໓] ສະໄໝນັ້ນ ທ່ານພຣະສຸທໍາເປັນພຣະນັກກໍ່ສ້າງ ຮັບພັດຕາຫານປະຈໍາໃນອາວາດຂອງຈິດຕະຄະຫະບໍດີ ເມືອງມັດສິກາສົນ ທຸກຄັ້ງທີ່ຈິດຕະຄະຫະບໍດີຕ້ອງການນິມົນສົງ ຄະນະ ຫຼືບຸກຄົນ ຖ້າຍັງບໍ່ຮຽນໃຫ້ທ່ານສຸທໍາຮູ້ ຈະບໍ່ນິມົນ

ຕໍ່ມາ ພຣະເຖຣະຫຼາຍອົງ ຄື ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດຈາຍະນະ ທ່ານພຣະມະຫາໂກດຖິກະ ທ່ານພຣະມະຫາກັບປິນະ ທ່ານພຣະມະຫາຈຸນທະ ທ່ານພຣະອະນຸຣຸດທະ ທ່ານພຣະເຣວະຕະ ທ່ານພຣະອຸບາລີ ທ່ານພຣະອານົນ ແລະທ່ານພຣະຣາຫຸນ ທ່ຽວຈາຣິກໄປແຄວ້ນກາສີຮອດເຖິງເມືອງມັດສິກາສົນ

## ຈິດຕະຄະຫະບໍດີຕ້ອນຮັບພຣະອາຄັນຕຸກະ

ຈິດຕະຄະຫະບໍດີຮູ້ວ່າ “ພຣະເຖຣະຫຼາຍອົງເດີນທາງມາເຖິງເມືອງມັດສິກາສົນແລ້ວ”

ຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພຣະເຖຣະທັງຫຼາຍທີ່ສໍານັກ ໄຫວ້ແລ້ວນັ່ງລົງທີ່ສົມຄວນ ທ່ານພຣະສາຣີບຸດໄດ້ຊີ້ແຈ່ງໃຫ້ຈິດຕະຄະຫະບໍດີຜູ້ນັ່ງທີ່ສົມຄວນໃຫ້ເຫັນແຈ້ງ ຊວນໃຫ້

ຍາກຮັບໄປ ປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມິກະຖາ

ລຳດັບນັ້ນ ຈິດຕະຄະຫະບໍດີຜູ້ເຊິ່ງພຣະສາຣີບຸດເຖຣະຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປ ປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມິກະຖາແລ້ວຈຶ່ງຂາບອາຣາດທະນາພຣະເຖຣະວ່າ "ທ່ານຜູ້ຈະເລີນ ຂໍພຣະເຖຣະທັງຫຼາຍ ໂຜດຮັບອາຄັນຕຸກະພັດຂອງຂ້ານ້ອຍ ເພື່ອຈະເລີນກຸສົນໃນມື້ອື່ນເຊົ້າເທີ້ນ

## ພຣະເຖຣະຮັບຄຳນິມົນໂດຍດຸດສະນີພາບ

ເມື່ອເຂົາຮູ້ວ່າພຣະເຖຣະຮັບຄຳນິມົນແລ້ວ ໄດ້ລຸກຂຶ້ນໄຫວ້ພຣະເຖຣະທັງຫຼາຍກະທຳປະທັກຂິນແລ້ວເຂົ້າໄປຫາທ່ານພຣະສຸທຳ ໄຫວ້ແລ້ວຢືນທີ່ສົມຄວນ ຮຽນທ່ານພຣະສຸທຳວ່າ "ທ່ານຜູ້ຈະເລີນ ນິມົນຮັບພັດຕາຫານຂອງຂ້ານ້ອຍ ເພື່ອຈະເລີນກຸສົນໃນມື້ອື່ນເຊົ້າ ພ້ອມກັບພຣະເຖຣະທັງຫຼາຍເທີ້ນ"

ລຳດັບນັ້ນ ພຣະສຸທຳຄິດວ່າ "ແຕ່ກ່ອນຈິດຕະຄະຫະບໍດີນີ້ເມື່ອຕ້ອງການຈະນິມົນສົງຄະນະຫຼືບຸກຄົນກໍຕ້ອງບອກເຮົາກ່ອນທຸກຄັ້ງ ແຕ່ເວລານີ້ກັບບໍ່ບອກເຮົາກ່ອນແລ້ວໄປນິມົນ ພຣະເຖຣະທັງຫຼາຍ ບັດນີ້ຈິດຕະຄະຫະບໍດີຄົງຈະໂກດບໍ່ສົນໃຈໃຍດີ ເບື່ອໜ່າຍເຮົາສາແລ້ວ" ຈຶ່ງຕອບວ່າ "ຢ່າເລີຍ ຈິດຕະຄະຫະບໍດີ ອາດຕະມາບໍ່ຮັບນິມົນ

ແມ່ນເທື່ອທີ ໒ ຈິດຕະຄະຫະບໍດີ ກໍຂາບຮຽນທ່ານພຣະສຸທຳດັ່ງນີ້ວ່າ "ທ່ານຜູ້ຈະເລີນ ນິມົນຮັບພັດຕາຫານຂອງຂ້ານ້ອຍ ເພື່ອຈະເລີນກຸສົນໃນມື້ອື່ນເຊົ້າພ້ອມກັບພຣະເຖຣະທັງຫຼາຍເທີ້ນ" ທ່ານພຣະສຸທຳຕອບວ່າ "ຢ່າເລີຍ ຈິດຕະຄະຫະບໍດີ ອາດຕະມາບໍ່ຮັບນິມົນ

ແມ່ນເທື່ອທີ ໓ ຈິດຕະຄະຫະບໍດີ ກໍຂາບຮຽນທ່ານພຣະສຸທຳດັ່ງນີ້ວ່າ "ທ່ານຜູ້ຈະເລີນ ນິມົນຮັບພັດຕາຫານຂອງຂ້ານ້ອຍ ເພື່ອຈະເລີນກຸສົນໃນມື້ອື່ນເຊົ້າພ້ອມກັບພຣະເຖຣະທັງຫຼາຍເທີ້ນ" ທ່ານພຣະສຸທຳຕອບວ່າ "ຢ່າເລີຍ ຈິດຕະຄະຫະບໍດີ ອາດຕະມາບໍ່ຮັບນິມົນ

ເວລານັ້ນ ຈິດຕະຄະຫະບໍດີຄິດວ່າ "ພຣະສຸທຳຈະຮັບບໍຮັບນິມົນກໍເຮັດຫຍັງເຮົາບໍ່ໄດ້" ໄຫວ້ພຣະສຸທຳແລ້ວກະທຳປະທັກຂິນນຈາກໄປ

## ພຣະສຸທຳຜິດຖຽງກັບຈິດຕະຄະຫະບໍດີ

[໓໒] ເມື່ອລ່ວງຣາຕີນັ້ນໄປ ຈິດຕະຄະຫະບໍດີໃຫ້ຈັດກຽມຂອງຫຍໍ້າຂອງສັນອັນປະນີດ ໄວ້ຖວາຍພິກຂຸຜູ້ເຖຣະທັງຫຼາຍ ສະໄໝນັ້ນ ທ່ານພຣະສຸທຳຄິດວ່າ "ຖ້າຈັ່ງໃດ ເຮົາຄວນກວດເບິ່ງ

ຂອງຫຍ້ຳຂອງສັນທີ່ຈິດຕະຄະຫະບໍດີກຽມຖວາຍພິກຂຸຜູ້ເຖຣະທັງຫຼາຍ” ພໍເຖິງເວລາເຊົ້າ ຈຶ່ງນຸ່ງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປນິເວດຂອງຈິດຕະຄະຫະບໍດີ ນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາທ່ານພຣະສຸທຳ ໄຫວ້ແລ້ວນັ່ງທີ່ສົມຄວນ

ທ່ານພຣະສຸທຳບອກຈິດຕະຄະຫະບໍດີຜູ້ນັ່ງທີ່ສົມຄວນແລ້ວວ່າ “ທ່ານກຽມຂອງຫຍ້ຳ ຂອງສັນໄວ້ຢ່າງພຽງພໍ ແຕ່ສິ່ງໜຶ່ງ ຄື ເຂົ້າໜົມແດກງາ ບໍ່ມີໃນບ່ອນນີ້

ຈິດຕະຄະຫະບໍດີກ່າວຕອບວ່າ “ທ່ານຜູ້ຈະເລີນ ເມື່ອພຣະພຸດທະພົດມີຢູ່ຫຼວງຫຼາຍ ແຕ່ພຣະສຸທຳກັບມາເວົ້າວ່າ ເຂົ້າໜົມແດກງາ ທ່ານຜູ້ຈະເລີນ ເຄີຍມີເລື້ອງຢູ່ວ່າ ພວກພໍ່ຄ້າຊາວ ທັກຂິນາບົດ ເດີນທາງໄປຄ້າຂາຍຖຽວຕາເວັນອອກ ພວກທ່ານນຳໄກ່ແມ່ມາຈາກບ່ອນນັ້ນ ຕໍ່ມາ ໄກ່ແມ່ສົມສູ່ກັບພໍ່ກາກໍອອກລູກ ເວລາທີ່ໄກ່ນ້ອຍໂຕນັ້ນຈະຮ້ອງແບບກາ ມັນກໍຮ້ອງສຽງກາປະສົມສຽງໄກ່ ເວລາທີ່ຈະຂັນແບບໄກ່ ມັນກໍຂັນສຽງໄກ່ປະສົມສຽງກາ ສັນໃດ ທ່ານຜູ້ຈະເລີນ ເມື່ອພຣະພຸດທະພົດມີຢູ່ຫຼວງຫຼາຍ ພຣະສຸທຳມາເວົ້າຄຳວ່າ ເຂົ້າໜົມແດກງາກໍຄືກັນ

ທ່ານພຣະສຸທຳກ່າວວ່າ “ຄະຫະບໍດີ ທ່ານດ່າກ່າວໂທດອາດຕະມາ ນັ້ນວັດຂອງທ່ານ ອາດຕະມາ ຈະໄປລະ

ຈິດຕະຄະຫະບໍດີກ່າວວ່າ “ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ໄດ້ດ່າກ່າວໂທດທ່ານ ຂໍອາຣາດທະນາທ່ານຢູ່ໃນອຳພາຕະກະວັນອັນອອນຊອນ ເມືອງມັດສິກາສົນເທີ້ນ ຂ້ານ້ອຍຈະເບິ່ງແຍງເລື້ອງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານສຳລັບທ່ານ

ແມ່ນເທື່ອທີ ໒ ທ່ານພຣະສຸທຳກໍກ່າວກັບຈິດຕະຄະຫະບໍດີວ່າ “ຄະຫະບໍດີ ທ່ານດ່າ ກ່າວໂທດ ອາດຕະມາ ນັ້ນວັດຂອງທ່ານ ອາດຕະມາຈະໄປລະ”

ຈິດຕະຄະຫະບໍດີກໍກ່າວວ່າ “ທ່ານຜູ້ຈະເລີນ ຂ້ານ້ອຍບໍ່ໄດ້ດ່າກ່າວໂທດທ່ານ ຂໍອາຣາດທະນາ ທ່ານຢູ່ໃນອຳພາຕະກະວັນອັນອອນຊອນ ເມືອງມັດສິກາສົນເທີ້ນ ຂ້ານ້ອຍຈະເບິ່ງແຍງເລື້ອງຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານສຳລັບທ່ານ

ແມ່ນເທື່ອທີ ໓ ທ່ານພຣະສຸທຳກໍກ່າວກັບຈິດຕະຄະຫະບໍດີວ່າ “ຄະຫະບໍດີ ທ່ານດ່າ ກ່າວໂທດ ອາດຕະມາ ນັ້ນວັດຂອງທ່ານ ອາດຕະມາຈະໄປລະ”

ຈິດຕະຄະຫະບໍດີຖາມວ່າ “ທ່ານຜູ້ຈະເລີນ ທ່ານຈະໄປໃສ

ທ່ານພຣະສຸທຳຕອບວ່າ “ຄະຫະບໍດີ ອາດຕະມາຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າທີ່ນະຄອນສາວັດຖີ

ຈິດຕະຄະຫະບໍດີກ່າວວ່າ "ທ່ານຜູ້ຈະເລີນ ຖ້າເປັນແນວນັ້ນ ທ່ານຈົ່ງຂາບທູນຄຳທີ່ທ່ານ ແລະ ທີ່ຂ້າພະເຈົ້າກ່າວແລ້ວໃຫ້ພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ທັງໝົດ ການທີ່ທ່ານຈະກັບມາເມືອງມັດສິກາສັນອີກ ບໍ່ແມ່ນເລື້ອງໜ້າອັດສະຈັນແຕ່ແນວໃດ

## ພຣະສຸທຳເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

[໓໕] ຕໍ່ມາ ທ່ານພຣະສຸທຳເກັບເສນາສະນະແລ້ວ ຖືບາດແລະຈີວອນເດີນທາງໄປ ທາງນະຄອນສາວັດຖີ ຈົນຊອດເຖິງພຣະເຊຕະວັນ ອາຮາມຂອງທ່ານອະນາຖະບິນທິກະໂດຍລຳດັບ ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຖວາຍອະພິວາດແລ້ວນັ່ງທີ່ສົມຄວນ ໄດ້ຂາບທູນເລື້ອງທີ່ຕົນກ່າວ ແລະ ເລື້ອງທີ່ຈິດຕະຄົບຫດີກ່າວນັ້ນທັງໝົດໃຫ້ຊົງຊາບ

## ຊົງຕຳໜິພຣະສຸທຳ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳແນວນັ້ນ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດ ໂມຄະບຸຣຸດ ຈິດຕະຄະຫະບໍດີເປັນຜູ້ມີ ສັດທາເຫຼື້ອມໃສ ເປັນທາຍົກ ເປັນຜູ້ທຳງານ ເປັນຜູ້ອຸບປະຖຳສົງ ເປັນຫຍັງທ່ານ ຈຶ່ງດ່າດ້ວຍຄຳຕ່ຳຊ້າ ຂົ່ມຂູ່ດ້ວຍຄຳຕ່ຳຊ້ານໍ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສ ໃຫ້ເຫຼື້ອມໃສ ฯລฯ ເມື່ອຊົງຕຳໜິແລ້ວ ฯລฯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຊຸທັງຫຼາຍວ່າ "ພິກຊຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລົງປະຕິສາຣະນີຍະກຳແກ່ພິກຊຸສຸທຳໂດຍສັ່ງໃຫ້ພິກຊຸສຸທຳນັ້ນໄປຂໍຂະມາ ຈິດຕະຄະຫະບໍດີ

## ວິທີລົງປະຕິສາຣະນີຍະກຳແລະກຳມະວາຈາ

ພິກຊຸທັງຫຼາຍ ສົງເພິ່ງລົງປະຕິສາຣະນີຍະກຳແນວນີ້ ຄື ເບື້ອງຕົ້ນ ເພິ່ງໂຈດພິກຊຸສຸທຳ ບັດແລ້ວໃຫ້ພິກຊຸສຸທຳໃຫ້ການແລ້ວຈຶ່ງປັບອາບັດ ເມື່ອປັບອາບັດແລ້ວ ພິກຊຸ ຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໓໖] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈິດຕະຄະຫະບໍດີເປັນຜູ້ມີສັດທາເຫຼື້ອມໃສ ເປັນທາຍົກ ເປັນຜູ້ທຳງານ ເປັນຜູ້ອຸບປະຖຳສົງ ພິກຊຸສຸທຳນີ້ດ່າດ້ວຍຄຳຕ່ຳຊ້າ ຂູ່ດ້ວຍຄຳຕ່ຳຊ້າ ຖ້າສົງພ້ອມກັນແລ້ວ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຊຸສຸທຳ ໂດຍສັ່ງໃຫ້ທ່ານໄປຂໍຂະມາຈິດຕະຄະຫະບໍດີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈິດຕະຄະຫະບໍດີເປັນຜູ້ມີສັດທາເຫຼື້ອມໃສ ເປັນທາຍົກ ເປັນຜູ້ທຳງານ ເປັນຜູ້ອຸບປະຖຳສົງ ພິກຂຸສຸທຳນີ້ດ່າດ້ວຍຄຳຕ່ຳຊ້າ ຂູ່ດ້ວຍຄຳຕ່ຳຊ້າ ສົງລົງປະຕິສາຣະນີຍະກຳແກ່ພິກຂຸສຸທຳ ໂດຍສັ່ງໃຫ້ພິກຂຸສຸທຳໄປຂໍຂະມາຈິດຕະຄະຫະບໍດີ ທ່ານອົງໃດເຫັນດ້ວຍກັບການລົງປະຕິສາຣະນີຍະກຳແກ່ພິກຂຸສຸທຳ ຄື ໃຫ້ພິກຂຸສຸທຳຂໍຂະມາ ຈິດຕະຄະຫະບໍດີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຈິດຕະຄະຫະບໍດີ ເປັນຜູ້ມີສັດທາເຫຼື້ອມໃສ ເປັນທາຍົກ ເປັນຜູ້ທຳງານ ເປັນຜູ້ອຸບປະຖຳສົງ ພິກຂຸສຸທຳນີ້ດ່າດ້ວຍຄຳຕ່ຳຊ້າ ຂູ່ດ້ວຍຄຳຕ່ຳຊ້າ ສົງລົງປະຕິສາຣະນີຍະກຳແກ່ພິກຂຸສຸທຳ ຄື ໃຫ້ພິກຂຸສຸທຳຂໍຂະມາຈິດຕະຄະຫະບໍດີ ທ່ານອົງໃດເຫັນດ້ວຍກັບການລົງປະຕິສາຣະນີຍະກຳ ແກ່ພິກຂຸສຸທຳ ໂດຍສັ່ງໃຫ້ພິກຂຸສຸທຳໄປຂໍຂະມາຈິດຕະຄະຫະບໍດີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ປະຕິສາຣະນີຍະກຳ ສົງລົງແລ້ວແກ່ພິກຂຸສຸທຳ ໂດຍສັ່ງໃຫ້ພິກຂຸສຸທຳໄປຂໍຂະມາຈິດຕະຄະຫະບໍດີ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິ ແບບນີ້"

## **ອະທຳມະກຳມະທະວາທະສະກະ**

## **ວ່າດ້ວຍປະຕິສາຣະນີຍະກຳທີ່ບໍ່ຊອບທຳ ໑໒ ໝວດ**

### **ໝວດທີ ໑**

[໓໗] ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳ ບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໒

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໓

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໔

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໗ລ໗

## ໝວດທີ ໕

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງໂດຍບໍ່ສອບຖາມ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໖

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ລົງຕາມປະຕິຍານ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໗

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແບວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໗

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໙

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໑໒

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

**ອະທຳມະກຳມະທະວາທະສະກະໃນປະຕິສາຣະນີຍະກຳ ຈົບ**

## ທຳມະກຳມະທະວາທະສະກະ

## ວ່າດ້ວຍປະຕິສາຣະນີຍະກຳທີ່ຊອບທຳ ໑໒ ໝວດ

## ໝວດທີ ໑

[໓໗] ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໒

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມິນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໓

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ฯລฯ

## ໝວດທີ ໔

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ฯລฯ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ฯລฯ

## ໝວດທີ ໕

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ฯລฯ ຄື

໑. ລົງໂດຍສອບຖາມກ່ອນ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໖

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຕາມປະຕິຍານ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໘

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໙

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໗ລ໗ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໗ລ໗

## ໝວດທີ ໑໐

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໗ລ໗ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໗ລ໗

## ໝວດທີ ໑໑

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ໗ລ໗ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໔. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໑໔

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ປະຕິສາຣະນີຍະກຳປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

**ທຳມະກຳມະທະວາທະສະກະໃນປະຕິສາຣະນີຍະກຳ ຈົບ**

## ອາກັງຂະນານະຈະຕຸກກະ

## ວ່າດ້ວຍສົງມຸ້ງຫວັງຈະລົງປະຕິສາຣະນີຍະກຳ ໔ ໝວດ

## ໝວດທີ ໑

[໓໙]ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພວກຄະລືຫັດ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພວກຄະລືຫັດ
໓. ຂົນຂວາຍເພື່ອຢູ່ບໍ່ໄດ້ແຫ່ງພວກຄະລືຫັດ
໔. ດ່າກ່າວໂທດພວກຄະລືຫັດ
໕. ຍຸຍົງພວກຄະລືຫັດໃຫ້ແຕກກັນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າແກ່ພວກຄະລືຫັດ
໒. ກ່າວຕິຕຽນພຣະທຳແກ່ພວກຄະລືຫັດ
໓. ກ່າວຕິຕຽນພຣະສົງແກ່ພວກຄະລືຫັດ[๑]
໔. ດ່າພວກຄະລືຫັດດ້ວຍຄຳຕ່ຳຊ້າ ຂູ່ດ້ວຍຄຳຕ່ຳຊ້າ

໕. ຮັບຄຳທີ່ຊອບທຳຂອງຄະລືຫັດແຕ່ບໍ່ເຮັດຕາມ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸ ໕ ອົງ ຄື

໑. ອົງໜຶ່ງຂົນຂວາຍເພື່ອບໍ່ແມ່ນລາບແກ່ພວກຄະລືຫັດ
໒. ອົງໜຶ່ງຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພວກຄະລືຫັດ
໓. ອົງໜຶ່ງຂົນຂວາຍເພື່ອຢູ່ບໍ່ໄດ້ແຫ່ງພວກຄະລືຫັດ
໔. ອົງໜຶ່ງດ່າກ່າວໂທດພວກຄະລືຫັດ
໕. ອົງໜຶ່ງຍຸຍົງພວກຄະລືຫັດໃຫ້ແຕກກັນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸ ໕ ອົງເຫຼົ່ານີ້ແລ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸອື່ນອີກ ໕ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າແກ່ພວກຄະລືຫັດ
໒. ອົງໜຶ່ງກ່າວຕິຕຽນພຣະທຳແກ່ພວກຄະລືຫັດ
໓. ພວກໜຶ່ງກ່າວຕິຕຽນພຣະສົງແກ່ພວກຄະລືຫັດ
໔. ອົງໜຶ່ງດ່າພວກຄະລືຫັດດ້ວຍຄຳຕ່ຳຊ້າ ຂູ່ດ້ວຍຄຳຕ່ຳຊ້າ
໕. ອົງໜຶ່ງຮັບຄຳທີ່ຊອບທຳຂອງຄະລືຫັດແຕ່ບໍ່ເຮັດຕາມ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງປະຕິສາຣະນີຍະກຳແກ່ພິກຂຸ ໕ ອົງເຫຼົ່ານີ້ແລ (໔)

**ອາກັງຂະມານະຈະຕຸກກະ ຈົບ**

## ອັດຖາຣະສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໑໘ ຂໍ້ໃນປະຕິສາຣະນີຍະກຳ

[໔໐] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງປະຕິສາຣະນີຍະກຳເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງສັ່ງສອນພິກຂຸນີລົງປະຕິສາຣະນີຍະກຳອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ອັດຖາຣະສະວັດຕະໃນປະຕິສາຣະນີຍະກຳ ຈົບ**

## ສົງລົງປະຕິສາຣະນີຍະກຳແກ່ພິກຂຸສຸທຳ

[໔໑] ຕໍ່ມາ ສົງໄດ້ລົງປະຕິສາຣະນີຍະກຳແກ່ພິກຂຸສຸທຳ ໂດຍສັ່ງໃຫ້ພິກຂຸສຸທຳນັ້ນໄປຂໍຂະມາຈິດຕະຄະຫະບໍດີ ພິກຂຸສຸທຳນັ້ນຖືກສົງລົງປະຕິສາຣະນີຍະກຳແລ້ວ ເດີນທາງໄປເມືອງມັດສິກາສົນ ຕ້ອງເກີ້ເຂີນ ບໍ່ອາດຂໍຂະມາຈິດຕະຄະຫະບໍດີໄດ້ຈຶ່ງກັບມາໃນເມືອງສາວັດຖີອີກ

ພິກຂຸທັງຫຼາຍຖາມທ່ານວ່າ "ທ່ານຂໍຂະມາຈິດຕະຄະຫະບໍດີແລ້ວບໍ"
ພິກຂຸສຸທຳຕອບວ່າ "ຂ້ານ້ອຍເດີນທາງໄປເມືອງມັດສິກາສົນຍ້ອນເລື້ອງນີ້ ຕ້ອງເກີ້ເຂີນ ບໍ່ອາດຂໍຂະມາຈິດຕະຄະຫະບໍດີໄດ້"

ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ພິກຂຸອະນຸທູດແກ່ພິກຂຸສຸທຳເພື່ອຂໍຂະມາຈິດຕະຄະຫະບໍດີ

## ວິທີໃຫ້ພຣະອະນຸທູດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ພຣະອະນຸທູດແນວນີ້ ຄື ເບື້ອງຕົ້ນເພິ່ງໃຫ້ພິກຂຸຍອມຮັບ ບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ພິກຂຸນີ້ເປັນພຣະອະນຸທູດແກ່ພິກຂຸສຸທຳເພື່ອຂໍຂະມາຈິດຕະຄະຫະບໍດີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງໃຫ້ພິກຂຸເປັນອະນຸທູດແກ່ພິກຂຸສຸທຳ ເພື່ອຂໍຂະມາຈິດຕະຄະຫະບໍດີ ທ່ານອົງໃດເຫັນດ້ວຍກັບການໃຫ້ພິກຂຸນີ້ເປັນອະນຸທູດແກ່ພິກຂຸສຸທຳ ເພື່ອຂໍຂະມາຈິດຕະຄະຫະບໍດີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸນີ້ສົງໃຫ້ເປັນອະນຸທູດແກ່ພິກຂຸສຸທຳແລ້ວເພື່ອຂໍຂະມາຈິດຕະຄະຫະບໍດີ ສົງເຫັນດ້ວຍຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ວິທີຂໍຂະມາຂອງພິກຂຸສຸທຳ

[໔໘] ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ພິກຂຸສຸທຳເພິ່ງໄປເມືອງມັດສິກາສົນກັບພຣະອະນຸທູດ ແລ້ວຂໍຂະມາຈິດຕະຄະຫະບໍດີວ່າ "ຈິດຕະຄະຫະບໍດີ ທ່ານໂຜດຍົກໂທດ ອາດຕະມາຈະເຮັດໃຫ້ທ່ານເຫຼື້ອມໃສ" ຖ້າເມື່ອກ່າວແນວນີ້ເຂົາຍົກໂທດໃຫ້ ນັ້ນເປັນການດີ ຖ້າຍັງບໍ່ຍອມຍົກໂທດໃຫ້ ພຣະອະນຸທູດເພິ່ງກ່າວວ່າ "ຈິດຕະຄະຫະບໍດີ ຂໍທ່ານຈົ່ງຍົກໂທດແກ່ພິກຂຸນີ້ ພິກຂຸນີ້ຈະເຮັດໃຫ້ທ່ານເຫຼື້ອມໃສ" ຖ້າເມື່ອກ່າວແນວນີ້ ເຂົາຍອມຍົກໂທດໃຫ້ ນັ້ນເປັນການດີ ຖ້າຍັງບໍ່ຍອມຍົກໂທດໃຫ້ ພຣະອະນຸທູດເພິ່ງກ່າວວ່າ "ຈິດຕະຄະຫະບໍດີ ທ່ານຈົ່ງຍົກໂທດແກ່ພິກຂຸນີ້

ອາດຕະມາຈະເຮັດທ່ານໃຫ້ເຫຼື້ອມໃສ" ຖ້າເມື່ອກ່າວແນວນີ້ເຂົາຍອມຍົກໂທດໃຫ້ ນັ້ນເປັນການດີ ຖ້າຍັງບໍ່ຍອມຍົກໂທດໃຫ້ ພຣະອະນຸທູດເພິ່ງກ່າວວ່າ "ຈິດຕະຄະຫະບໍດີ ທ່ານຈົ່ງຍົກໂທດໃຫ້ຕາມຄຳຂອງສົງ" ຖ້າເມື່ອກ່າວແນວນີ້ ເຂົາຍອມຍົກໂທດໃຫ້ ນັ້ນເປັນການດີ ຖ້າຍັງບໍ່ຍອມຍົກໂທດໃຫ້ ພຣະອະນຸທູດເພິ່ງໃຫ້ພິກຂຸສຸທຳ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ໃຫ້ນັ່ງຍ່ອງຍໍ້ ໃຫ້ປະນົມມືແລ້ວໃຫ້ສະແດງອາບັດນັ້ນບໍ່ເລີຍເຂດທີ່ຈິດຕະຄະຫະບໍດີຈະແນມເຫັນ ຈະໄດ້ຍິນ

ຕໍ່ມາ ທ່ານພິກຂຸສຸທຳເດີນທາງໄປເມືອງມັດສິກາສັນກັບພຣະອະນຸທູດແລ້ວຂໍຂະມາຈິດຕະຄະຫະບໍດີ ທ່ານກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ເຂົ້າໄປຫາພິກຂຸທັງຫຼາຍແລ້ວກ່າວແບບນີ້ "ຂ້ານ້ອຍຖືກສົງລົງປະຕິສາຣະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈະປະຕິບັດແນວໃດ"

ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳ

## ນັບປະຕິປັດສຳເພຕັບພະອັດຖາຣະສະກະ

### ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳ

### ໝວດທີ ໑

[໔໓]ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

### ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກ
໒. ຕ້ອງອາບັດອື່ນທຳນອງດຽວກັນ ສົງລົງປະຕິສາຣະນີຍະກຳ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້

## ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້

**ນັບປະຕິປັດສຳເພຕັບພະອັດຖາຣະສະກະໃນປະຕິສາຣະນີຍະກຳ ຈົບ**

## ປະຕິປັດສຳເພຕັບພະອັດຖາຣະສະກະ

## ວ່າດ້ວຍອົງ ໑໘ ຂອງພິກຂຸທີ່ສົງເພິ່ງລະງັບປະຕິສາຣະນີຍະກຳ

## ໝວດທີ ໑

[໔໔] ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ
໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນສົງລົງປະຕິສາຣະນີຍະກຳອີກ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ
໗. ບໍ່ໃຫ້ພິກຂຸອື່ນໃຫ້ການ
໘. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ

**ປະຕິປັດສຳເພຕັບພະອັດຖາຣະສະກະໃນປະຕິສາຣະນີຍະກຳ ຈົບ**

## ວິທີລະງັບປະຕິສາຣະນີຍະກຳແລະກຳມະວາຈາ

[໔໕] ພິກຂຸທັງຫຼາຍ ສົງເພິ່ງລະງັບປະຕິສາຣະນີຍະກຳແນວນີ້ ຄື ພິກຂຸສຸທຳເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມ

มี ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຖືກສົງລົງ ປະຕິສາຣະນີຍະກຳແລ້ວ ກັບປະພຶດ ຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບປະຕິສາຣະນີຍະກຳ

ເພິ່ງຂໍແມ່ນເທື່ອທີ ໒ ຫລຍ
ເພິ່ງຂໍແມ່ນເທື່ອທີ ໓ ຫລຍ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສຸທຳນີ້ຖືກສົງລົງປະຕິສາຣະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສຸທຳນີ້ຖືກສົງລົງປະຕິສາຣະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ສົງລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບປະຕິສາຣະນີຍະກຳ ແກ່ພິກຂຸສຸທຳ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສຸທຳນີ້ຖືກສົງລົງປະຕິສາຣະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ສົງລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສຸທຳນີ້ຖືກສົງລົງປະຕິສາຣະນີຍະກຳແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ສົງລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳ ທ່ານອົງໃດເຫັນດ້ວຍກັບການລະງັບປະຕິສາຣະນີຍະກຳແກ່ພິກຂຸສຸທຳ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ປະຕິສາຣະນີຍະກຳ ສົງລະງັບແລ້ວແກ່ພິກຂຸສຸທຳ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

**ປະຕິສາຣະນີຍະກຳທີ ໔ ຈົບ**

# ໕. ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

## ເລື້ອງພຣະສັນນະ

[໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ຄັ້ງນັ້ນ ທ່ານພຣະສັນນະຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ[1]

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະສັນນະຕ້ອງອາບັດແລ້ວ ຈຶ່ງບໍ່ປາຖະໜາຈະເຫັນວ່າເປັນອາບັດນໍ" ແລ້ວນຳເລື້ອງນີ້ໄປຂາບທູນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸສັນນະຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ແມ່ນບໍ?

ພິກຂຸເຫຼົ່ານັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າ ຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳເຊັ່ນນັ້ນ ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດນັ້ນ ຕ້ອງອາບັດແລ້ວ ຈຶ່ງບໍ່ປາຖະໜາ ຈະເຫັນວ່າເປັນອາ ບັດນໍ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແບບນັ້ນ ສົງຈົ່ງລົງອຸກເຂປະນີຍະກຳພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກ[1] ກັບສົງ

## ວິທີລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລົງອຸກເຂປະນີຍະກຳແບບນີ້ ຄື ເບື້ອງຕົ້ນເພິ່ງໂຈດພິກຂຸສັນນະ ບັດແລ້ວໃຫ້ພິກຂຸສັນນະໃຫ້ການແລ້ວຈຶ່ງປັບອາບັດ ເມື່ອປັບອາບັດແລ້ວພິກຂຸຜູ້ສະຫຼາດ ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໔໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ຖ້າສົງພ້ອມກັນແລ້ວ ເພິ່ງລົງອຸກເຂປະນີຍະກຳພິກຂຸສັນນະ ຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ສົງລົງອຸກເຂປະນີຍະກຳແກ່ພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳແກ່ພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ສົງລົງອຸກເຂປະນີຍະກຳແກ່ພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳແກ່ພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ສົງລົງແກ່ພິກຂຸສັນນະແລ້ວ ຫ້າມສົມໂພກກັບສົງ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸທັງຫຼາຍ ພວກທ່ານຈົ່ງບອກພິກຂຸຜູ້ຢູ່ໃນອາວາດຕ່ໍ ໆ ໄປວ່າ "ພິກຂຸສັນນະ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ

## ອະທຳມະກຳມະທະວາທະສະກະ

## ວ່າດ້ວຍອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດທີ່ບໍ່ຊອບທຳ ໑໒ ໝວດ

## ໝວດທີ ໑

[໔໗] ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍ ອົງ ໓ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ ຯລຯ

## ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

១. ລົງໂດຍບໍ່ສອບຖາມ
៤. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ ๆລๆ

## ໝວດທີ ៦

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ៣ ອີກແນວໜຶ່ງ ๆລๆ ຄື

១. ບໍ່ລົງຕາມປະຕິຍານ
៤. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ ๆລๆ

## ໝວດທີ ៗ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ៣ ອີກແນວໜຶ່ງ ๆລๆ ຄື

១. ລົງຍ້ອນບໍ່ຕ້ອງອາບັດ
៤. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ ๆລๆ

## ໝວດທີ ៣

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ៣ ອີກແນວໜຶ່ງ ๆລๆ ຄື

១. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
៤. ລົງໂດຍບໍ່ຊອບທຳ
៣. ສົງແບ່ງພວກກັນລົງ ๆລๆ

## ໝວດທີ ៧

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ៣ ອີກແນວໜຶ່ງ ๆລๆ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ໆລໆ

## ໝວດທີ ໑໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

**ອະທຳມະກຳມະທະວາທະສະກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ທຳມະກຳມະທະວາທະສະກະ

## ວ່າດ້ວຍອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດທີ່ຊອບທຳ ໑໔ ໝວດ

### ໝວດທີ ໑

[໔໙] ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໔. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

### ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໔. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ ຯລຯ

### ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໔. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງໂດຍສອບຖາມກ່ອນ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໖

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຕາມປະຕິຍານ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໙

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໑໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໗ລ໗ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ ໗ລ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

**ທຳມະກຳມະທະວາທະສະກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ອາກັງຂະມານະສັກກະ

## ວ່າດ້ວຍສົງມຸ້ງຫວັງຈະລົງອຸກເຂປະນີຍະກຳ ໖ ໝວດ

## ໝວດທີ ໑

[໕໐] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າ ເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ຄື

໑. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ໂງ່ຈ້ຳ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ມີສີນວິບັດໃນອະທິສີນ
໒. ມີອາຈາຣະວິບັດໃນອັດຊາຈານ
໓. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ໓ ຈຳພວກ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ຯລຯ ກໍ່ອະທິກອນໃນສົງ
໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດ ແກ່ພິກຂຸ ໓ ຈຳພວກເຫຼົ່ານີ້ແລ

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸອື່ນອີກ ໓ ຈຳພວກ ຄື

໑. ອີງໜຶ່ງມີສີນວິບັດໃນອະທິສີນ
໒. ອີງໜຶ່ງມີອາຈາຣະວິບັດໃນອັດຊາຈານ
໓. ອີງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ໓ ຈຳພວກເຫຼົ່ານີ້ແລ

## ໝວດທີ ໖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸອື່ນອີກ ໓ ຈຳພວກ ຄື

໑. ອີງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ
໒. ອີງໜຶ່ງກ່າວຕິຕຽນພຣະທຳ
໓. ອີງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ໓ ຈຳພວກເຫຼົ່ານີ້ແລ

**ອາກັງຂະມານະສັກກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ເຕຈັດຕາລີສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໔໓ ຂໍ້ໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

[໕໑] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ເພິ່ງປະພຶດໂດຍຊອບ ການປະພຶດໂດຍຊອບໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນການບໍ່ເຫັນວ່າເປັນອາບັດອີກ

໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງຍິນດີການລຸກຮັບຂອງປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງຍິນດີການປະນົມມືຂອງປະກະຕັດຕະພິກຂຸ
໑໔. ບໍ່ເພິ່ງຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ
໑໕. ບໍ່ເພິ່ງຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ
໑໖. ບໍ່ເພິ່ງຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ
໑໗. ບໍ່ເພິ່ງຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກີບໃຫ້ຂອງປະກະຕັດຕະພິກຂຸ
໑໘. ບໍ່ເພິ່ງຍິນດີການຕັ້ງກະເບື້ອງເຊັດຕີນໃຫ້ຂອງປະກະຕັດຕະພິກຂຸ
໑໙. ບໍ່ເພິ່ງຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ
໒໑. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ
໒໒. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ
໒໓. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໒໔. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໒໕. ບໍ່ເພິ່ງຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ
໒໖. ບໍ່ເພິ່ງໃຊ້ເຄື່ອງນຸ່ງຫົ່ມແບບຄະລືຫັດ
໒໗. ບໍ່ເພິ່ງໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໒໘. ບໍ່ເພິ່ງຄົບພວກເດຍຣະຖີ
໒໙. ເພິ່ງຄົບພວກພິກຂຸ
໓໐. ເພິ່ງສຶກສາສິກຂາບົດຂອງພິກຂຸ
໓໑. ບໍ່ເພິ່ງຢູ່ໃນອາວາດທີ່ມີເຄື່ອງມຸງດຽວກັນກັບປະກະຕັດຕະພິກຂຸ
໓໒. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງດຽວກັນກັບປະກະຕັດຕະພິກຂຸ
໓໓. ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງດຽວກັນກັບປະກະຕັດຕະພິກຂຸ
໓໔. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ
໓໕. ບໍ່ເພິ່ງຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ
໓໖. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ

໓໗. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓໘. ບໍ່ເພິ່ງກະທຳການສອບສວນ
໓໙. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໔໐. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໔໑. ບໍ່ເພິ່ງໂຈດພິກຂຸອື່ນ
໔໒. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໔໓. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ເຕຈັດຕາລີສະວັດຕະໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ສົງລົງໂທດແລະລະງັບກຳ

[໕໒] ຄັ້ງນັ້ນ ສົງໄດ້ລົງອຸກເຂປະນີຍະກຳພິກຂຸສັນນະຍ້ອນບໍ່ເຫັນວ່າເປັນອາບັດ ຫ້າມສົມໂພກກັບສົງ ພິກຂຸສັນນະນັ້ນຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ພິກຂຸສັນນະນັ້ນໄດ້ອອກຈາກອາວາດນັ້ນໄປອາວາດອື່ນ

ພວກພິກຂຸໃນອາວາດອື່ນນັ້ນບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖືບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງເດີນທາງໄປຈາກອາວາດນັ້ນສູ່ອາວາດອື່ນ

ແມ່ນພວກພິກຂຸໃນອາວາດອື່ນນັ້ນກໍບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງເດີນທາງຈາກອາວາດນັ້ນໄປສູ່ອາວາດອື່ນ

ແມ່ນພວກພິກຂຸໃນອາວາດອື່ນນັ້ນກໍບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງຕ້ອງຫວນກັບມາເມືອງໂກສຳພີອີກຄືເກົ່າ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ແລ້ວເຂົ້າໄປຫາພວກພິກຂຸບອກວ່າ "ຂ້ານ້ອຍ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ແລ້ວ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລະງັບອຸກເຂປະນີຍະ- ກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸສັນນະ

## ນັບປະຕິບັດສຳເພຕັບພະເຕຈັດຕາລີສະກະ

## ວ່າດ້ວຍອົງ ໔໓ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

### ໝວດທີ ໑

[໔໓] ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດ ແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໕)

### ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດອີກ
໒. ຕ້ອງອາບັດອື່ນທຳນອງດຽວກັນ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑໐)

## ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ

໒. ຍິນດີການລຸກຮັບຂອງປະກະຕັດຕະພິກຂຸ

໓. ຍິນດີການປະນົມມືຂອງປະກະຕັດຕະພິກຂຸ

໔. ຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ

໕. ຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑໕)

## ໝວດທີ ໔

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ

໒. ຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກີບໃຫ້ຂອງປະກະຕັດຕະພິກຂຸ

໓. ຍິນດີການຕັ້ງກະເບື້ອງເຊັດຕີນຂອງປະກະຕັດຕະພິກຂຸ

໔. ຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ

໕. ຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໒໐)

## ໝວດທີ ໕

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ

໒. ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ

໓. ໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໔. ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໕. ຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໔໕)

## ໝວດທີ ໖

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ໃຊ້ເຄື່ອງນຸ່ງຫົ່ມແບບຄະລິຫັດ
໒. ໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໓. ຄົບພວກເດຍຣະຖີ
໔. ບໍ່ຄົບພວກພິກຂຸ
໕. ບໍ່ສຶກສາສິກຂາບົດຂອງພິກຂຸ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໓໐)

## ໝວດທີ ໗

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຢູ່ໃນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໒. ຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓. ຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໔. ເຫັນປະກະຕັດຕະພິກຂຸແລ້ວບໍ່ລຸກຈາກອາສະນະ
໕. ຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໓໕)

## ໝວດທີ ໘

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ອີກແນວໜຶ່ງ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ (໔໓)

**ນັບປະຕິປັດສຳເພຕັບພະເຕຈັດຕາລີສະກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ປະຕິປັດສຳເພຕັບພະເຕຈັດຕາລີສະກະ

## ວ່າດ້ວຍອົງ ໔໓ ຂອງພິກຂຸທີ່ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

## ໝວດທີ ໑

[໕໔] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ

໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໕)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດອີກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑໐)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ
໒. ບໍ່ຍິນດີການລຸກຮັບຂອງປະກະຕັດຕະພິກຂຸ
໓. ບໍ່ຍິນດີການປະນົມມືຂອງປະກະຕັດຕະພິກຂຸ
໔. ບໍ່ຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ
໕. ບໍ່ຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໑໕)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ
໒. ບໍ່ຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກີບໃຫ້ຂອງປະກະຕັດຕະພິກຂຸ
໓. ບໍ່ຍິນດີການຕັ້ງກະເບື້ອງເຊັດຕີນໃຫ້ຂອງປະກະຕັດຕະພິກຂຸ
໔. ບໍ່ຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ
໕. ບໍ່ຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໔໐)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ
໒. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ
໓. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໔. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໕. ບໍ່ຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໔໕)

## ໝວດທີ ໖

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ໃຊ້ເຄື່ອງນຸ່ງຫົ່ມແບບຄະລິຫັດ

໒. ບໍ່ໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໓. ບໍ່ຄົບພວກເດຍຣະຖີ
໔. ຄົບພວກພິກຂຸ
໕. ສຶກສາສິກຂາບົດຂອງພິກຂຸ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໓໐)

## ໝວດທີ ໆ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຢູ່ໃນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໒. ບໍ່ຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓. ບໍ່ຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໔. ເຫັນປະກະຕັດຕະພິກຂຸແລ້ວລຸກຈາກອາສະນະ
໕. ບໍ່ຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ (໓໕)

## ໝວດທີ ໘

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ

ຖ. ບໍ່ໃຫ້ພິກຂຸອື່ນໃຫ້ການ
ຕ. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ຕ ເຫຼົ່ານີ້ແລ (໔໓)

**ປະຕິປັດສຳເພດັບພະເຕຈັດຕາລີສະກະໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຈົບ**

## ວິທີລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລະກຳມະວາຈາ

[໔໔] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແບບນີ້ ຄື ພິກຂຸສັນນະນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນ ພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຍ່ອງຍໍ້ ປະນົມມື ກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸສັນນະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນ ບໍ່ເຫັນວ່າເປັນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ສົງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຫັນອາບັດແກ່ພິກຂຸສັນນະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸສັນນະແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລ້ວ ກັບປະພຶດຊອບ ຫາຍ

ຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ສົງລະງັບ ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸສັນນະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸສັນນະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ສົງລະງັບແລ້ວແກ່ພິກຂຸສັນນະ ສົງເຫັນດ້ວຍຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດທີ ໕ ຈົບ**

# ຝ. ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ (ສະແດງອາບັດ)

## ເລື້ອງພຣະສັນນະ

[໕ຝ] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ໂຄສິຕາຣາມ ເຂດນະຄອນ ໂກສຳພີ ຄັ້ງນັ້ນ ພິກຂຸສັນນະຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ

ພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸສັນນະຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດນໍ" ດັ່ງນີ້ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມແລ້ວຕຳໜິ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸສັນນະຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນ ແມ່ນບໍ?"

ພວກພິກຂຸທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳແນວນັ້ນ ບໍ່ສົມຄວນ ຯລຯ ບໍ່ຄວນເຮັດເລີຍ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດນັ້ນ ຕ້ອງອາບັດແລ້ວບໍ່ປາຖະໜາເຮັດຄືນອາບັດນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ຫ້າມສົມໂພກກັບສົງ

## ວິທີລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແບບນີ້ ຄື ເບື້ອງຕົ້ນໂຈດພິກຂຸສັນນະດ້ວຍອາບັດແລ້ວໃຫ້ພິກຂຸສັນນະນັ້ນໃຫ້ການປັບອາບັດ ເມື່ອປັບອາບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ ຖ້າສົງພ້ອມກັນແລ້ວເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະຫ້າມສົມໂພກກັບສົງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ ສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ຫ້າມສົມໂພກກັບສົງທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ ສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ສົງລົງແກ່ພິກຂຸສັນນະແລ້ວ ຫ້າມສົມໂພກກັບສົງສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

ພິກຂຸທັງຫຼາຍ ພວກທ່ານຈົ່ງບອກພິກຂຸໃນອາວາດຕໍ່ ໆ ໄປວ່າ "ພິກຂຸສັນນະຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຫ້າມສົມໂພກກັບສົງ

### ອະທຳມະກຳມະທະວາທະສະກະ

## ວ່າດ້ວຍອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດທີ່ບໍ່ຊອບທຳ ໑໒ ໝວດ

## ໝວດທີ ໑

[໕໗] ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

## ໝວດທີ ໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ ຯລຯ

## ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງໂດຍບໍ່ສອບຖາມ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໖

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ລົງຕາມປະຕິຍານ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນອະເທສະນາຄາມິນີ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ

໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

**ອະທຳມະກຳມະທະວາທະສະກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຈົບ**

**ທຳມະກຳມະທະວາທະສະກະ**

## ວ່າດ້ວຍອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດທີ່ຊອບທຳ ໑໘ ໝວດ

## ໝວດທີ ໑

[໕໗] ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງໂດຍສອບຖາມກ່ອນ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໖

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຕາມປະຕິຍານ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນຕ້ອງອາບັດ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມິນີ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ໆລໆ

## ໝວດທີ ໙

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທໍາ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກໍາຊອບດ້ວຍທໍາ ເປັນກໍາຊອບດ້ວຍວິໄນ ແລະລະງັບດີ

**ທໍາມະກໍາມະທະວາທະສະກະ ໃນອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດ ຈົບ**

## ອາກັງຂະມານະສັກກະ

## ວ່າດ້ວຍສົງມຸ້ງຫວັງຈະລົງອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດ ໖ ໝວດ

### ໝວດທີ ໑

[໕໙] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ຄື

໑. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກໍານົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

### ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກໍາຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ມີສີນວິບັດໃນອະທິສີນ
໒. ມີອາຈາຣະວິບັດໃນອັດຊາຈານ
໓. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງມີສີນວິບັດໃນອະທິສີນ
໒. ອົງໜຶ່ງມີອາຈາຣະວິບັດໃນອັດຊາຈານ
໓. ອົງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ

## ໝວດທີ ໖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ
໒. ອົງໜຶ່ງກ່າວຕິຕຽນພຣະທຳ
໓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸ ໓ ອົງເຫຼົ່ານີ້ແລ

**ອາກັງຂະມານະສັກກະໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຈົບ**

## ເຕຈັດຕາລີສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໔໓ ຂໍ້ ໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

[໖໐] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດ ເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ

໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງຍິນດີການລຸກຮັບຂອງປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງຍິນດີການປະນົມມືຂອງປະກະຕັດຕະພິກຂຸ
໑໔. ບໍ່ເພິ່ງຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ
໑໕. ບໍ່ເພິ່ງຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ
໑໖. ບໍ່ເພິ່ງຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ
໑໗. ບໍ່ເພິ່ງຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກີບໃຫ້ຂອງປະກະຕັດຕະພິກຂຸ
໑໘. ບໍ່ເພິ່ງຍິນດີການຕັ້ງກະເບື້ອງເຊັດຕີນໃຫ້ຂອງປະກະຕັດຕະພິກຂຸ
໑໙. ບໍ່ເພິ່ງຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ
໒໑. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ
໒໒. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ
໒໓. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໒໔. ບໍ່ເພິ່ງໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໒໕. ບໍ່ເພິ່ງຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ
໒໖. ບໍ່ເພິ່ງໃຊ້ເຄື່ອງນຸ່ງຫົ່ມແບບຄະລຶຫັດ
໒໗. ບໍ່ເພິ່ງໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໒໘. ບໍ່ເພິ່ງຄົບພວກເດຍຣະຖີ
໒໙. ເພິ່ງຄົບພວກພິກຂຸ
໓໐. ເພິ່ງສຶກສາສິກຂາບົດຂອງພິກຂຸ
໓໑. ບໍ່ເພິ່ງຢູ່ໃນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓໒. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓໓. ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓໔. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ
໓໕. ບໍ່ເພິ່ງຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ
໓໖. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໓໗. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓໘. ບໍ່ເພິ່ງກະທຳການສອບສວນ

໓໙. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໔໐. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໔໑. ບໍ່ເພິ່ງໂຈດພິກຂຸອື່ນ
໔໒. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໔໓. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ເຕຈັດຕາລີສະວັດຕະໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຈົບ**

## ສົງລົງໂທດແລະລະງັບກຳ

[໖໑] ຕໍ່ມາ ສົງໄດ້ລົງອຸກເຂປະນີຍະກຳພິກຂຸສັນນະ ຍ້ອນບໍ່ເຮັດຄືນອາບັດ ທ້າມສົມໂພກກັບສົງ ພິກຂຸສັນນະນັ້ນຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ພິກຂຸສັນນະນັ້ນໄດ້ອອກຈາກອາວາດນັ້ນໄປສູ່ອາວາດອື່ນ

ພວກພິກຂຸໃນອາວາດອື່ນນັ້ນບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງໄດ້ເດີນທາງຈາກອາວາດນັ້ນໄປສູ່ອາວາດອື່ນ

ແມ່ນພວກພິກຂຸໃນອາວາດອື່ນນັ້ນກໍບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງໄດ້ເດີນທາງຈາກອາວາດນັ້ນໄປສູ່ອາວາດອື່ນ

ແມ່ນພວກພິກຂຸໃນອາວາດອື່ນນັ້ນກໍບໍ່ຂາບໄຫວ້ ບໍ່ລຸກຮັບ ບໍ່ປະນົມມື ບໍ່ເຮັດສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ພິກຂຸສັນນະນັ້ນອັນພວກພິກຂຸ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ບູຊາ ເປັນຜູ້ບໍ່ມີໃຜເຊື່ອຖື ຈຶ່ງຕ້ອງທວນກັບມາເມືອງໂກສຳພີອີກຄືເກົ່າ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ແລ້ວ ເຂົ້າໄປຫາພວກພິກຂຸບອກວ່າ “ຂ້ານ້ອຍຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ແລ້ວ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ

## ນັບປະຕິບັດສຳເພຕັບພະເຕຈັດຕາລີສະກະ

## ວ່າດ້ວຍອົງ ໒໓ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດ ຄືນອາບັດ

### ໝວດທີ ໑

[໖໒] ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

### ໝວດທີ ໒

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດອີກ
໒. ຕ້ອງອາບັດອື່ນທຳນອງດຽວກັນ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ ฯລฯ

### ໝວດທີ ໓

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ
໒. ຍິນດີການລຸກຮັບຂອງປະກະຕັດຕະພິກຂຸ
໓. ຍິນດີການປະນົມມືຂອງປະກະຕັດຕະພິກຂຸ
໔. ຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ
໕. ຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ ໆລໆ

## ໝວດທີ ໔

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ
໒. ຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກີບໃຫ້ຂອງປະກະຕັດຕະພິກຂຸ
໓. ຍິນດີການຕັ້ງກະເບື້ອງເຊັດຕີນໃຫ້ຂອງປະກະຕັດຕະພິກຂຸ
໔. ຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ
໕. ຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ ໆລໆ

## ໝວດທີ ໕

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ
໒. ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ
໓. ໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໔. ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໕. ຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ ໆລໆ

## ໝວດທີ ໖

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ໃຊ້ເຄື່ອງນຸ່ງຫົ່ມແບບຄະລືຫັດ

໒. ໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໓. ຄົບພວກເດຍຣະຖີ
໔. ບໍ່ຄົບພວກພິກຂຸ
໕. ບໍ່ສຶກສາສິກຂາບົດຂອງພິກຂຸ ฯລฯ

## ໝວດທີ ໗

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຢູ່ໃນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໒. ຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓. ຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໔. ເຫັນປະກະຕັດຕະພິກຂຸແລ້ວບໍ່ລຸກຈາກອາສະນະ
໕. ຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໘

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ກະທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໘. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໗ ເຫຼົ່ານີ້ແລ

**ນັບປະຕິບັດສຳເພຕັບພະເຕຈັດຕາລິສະກະໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຈົບ**

## ປະຕິປັດສຳເພຕັບພະເຕຈັດຕາລິສະກະ

## ວ່າດ້ວຍອົງ ໔໓ ຂອງພິກຂຸທີ່ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

### ໝວດທີ ໑

[໖໓] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ
໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

### ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດອີກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ ໗໘໗

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຍິນດີການຂາບໄຫວ້ຂອງປະກະຕັດຕະພິກຂຸ
໒. ບໍ່ຍິນດີການລຸກຮັບຂອງປະກະຕັດຕະພິກຂຸ
໓. ບໍ່ຍິນດີການປະນົມມືຂອງປະກະຕັດຕະພິກຂຸ
໔. ບໍ່ຍິນດີສາມີຈິກຳຂອງປະກະຕັດຕະພິກຂຸ
໕. ບໍ່ຍິນດີການນຳອາສະນະມາໃຫ້ຂອງປະກະຕັດຕະພິກຂຸ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຍິນດີການນຳບ່ອນນອນມາໃຫ້ຂອງປະກະຕັດຕະພິກຂຸ
໒. ບໍ່ຍິນດີນ້ຳລ້າງຕີນ ການຕັ້ງຕັ່ງເກັບໃຫ້ຂອງປະກະຕັດຕະພິກຂຸ
໓. ບໍ່ຍິນດີການຕັ້ງກະເບື້ອງເຊັດຕີນໃຫ້ຂອງປະກະຕັດຕະພິກຂຸ
໔. ບໍ່ຍິນດີການຮັບບາດແລະຈີວອນຂອງປະກະຕັດຕະພິກຂຸ
໕. ບໍ່ຍິນດີການທີ່ປະກະຕັດຕະພິກຂຸຖູຫຼັງໃຫ້ໃນເວລາອາບນ້ຳ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍສີລະວິບັດ
໒. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຈາຣະວິບັດ
໓. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍທິດຖິວິບັດ
໔. ບໍ່ໃສ່ຄວາມປະກະຕັດຕະພິກຂຸດ້ວຍອາຊີວະວິບັດ
໕. ບໍ່ຍຸຍົງປະກະຕັດຕະພິກຂຸໃຫ້ແຕກກັນ ຯລຯ

## ໝວດທີ ໓

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ໃຊ້ເຄື່ອງນຸ່ງຫົ່ມແບບຄະລືຫັດ
໒. ບໍ່ໃຊ້ເຄື່ອງນຸ່ງຫົ່ມແບບເດຍຣະຖີ
໓. ບໍ່ຄົບພວກເດຍຣະຖີ
໔. ຄົບພວກພິກຂຸ
໕. ສຶກສາສິກຂາບົດຂອງພິກຂຸ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຢູ່ໃນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໒. ບໍ່ຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໓. ບໍ່ຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີເຄື່ອງມຸງບັງດຽວກັນກັບປະກະຕັດຕະພິກຂຸ
໔. ເຫັນປະກະຕັດຕະພິກຂຸແລ້ວລຸກຈາກອາສະນະ
໕. ບໍ່ຮຸກຮານປະກະຕັດຕະພິກຂຸທັງຂ້າງໃນຫຼືຂ້າງນອກວິຫານ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໘

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ

໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ
໗. ບໍ່ໃຫ້ພິກຂຸອື່ນໃຫ້ການ
໘. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸຜູ້ປະກອບດ້ວຍອົງ ໘ ເຫຼົ່ານີ້ແລ

**ປະຕິປັດສຳເພດັບພະເຕຈັດຕາລີສະກະ ໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຈົບ**

## ວິທີລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແລະກຳມະວາຈາ

[໖໔] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແນວນີ້ ຄື ພິກຂຸສັນນະ ນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຍ່ອງຍໍ້ ປະນົມມືກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ
ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຮັດຄືນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ສົງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ທ່ານອົງນັ້ນເພິ່ງມິດ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໘ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸສັນນະນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແລ້ວ ກັບປະພຶດຊອບ ຫາຍຈອງຫອງກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ສົງລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸສັນນະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ສົງລະງັບແກ່ພິກຂຸສັນນະແລ້ວ ສົງເຫັນດ້ວຍຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດທີ ໖ ຈົບ**

# ກ. ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

## ເລື້ອງພິກຂຸອະຣິດຖະ

[໖໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທິດຖິບາບແນວນີ້ໄດ້ເກີດຂຶ້ນແກ່ພິກຂຸ ຊື່ອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນວ່າວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ"[໔]

ພິກຂຸຫຼາຍຮູບໄດ້ຮູ້ຂ່າວວ່າ "ທິດຖິບາບແນວນີ້ໄດ້ເກີດຂຶ້ນແກ່ພິກຂຸຊື່ອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ" ບັດແລ້ວພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປຫາພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ກ່າວກັບພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງດັ່ງນີ້ວ່າ "ທ່ານອະຣິດຖະ ໄດ້ຂ່າວວ່າ ທິດຖິບາບແນວນີ້ໄດ້ເກີດຂຶ້ນແກ່ທ່ານວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ" ແມ່ນບໍ?

ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງກ່າວວ່າ "ເປັນແນວນັ້ນແທ້ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຈົນເຖິງວ່າທຳຕາມ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ"

ພິກຂຸທັງຫຼາຍໄດ້ກ່າວວ່າ "ທ່ານອະຣິດຖະ ທ່ານຢ່າໄດ້ກ່າວແນວນີ້ ຢ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າ ການກ່າວຕູ່ພຣະຜູ້ມີພຣະພາກເຈົ້າບໍ່ດີເລີຍ ຍ້ອນພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດແນວນັ້ນ ທ່ານອະຣິດຖະ ພຣະຜູ້ມີພຣະພາກເຈົ້າຕັດທຳທີ່ກໍ່ອັນຕະລາຍວ່າເປັນທຳກໍ່ອັນຕະລາຍໄວ້ໂດຍປະການຕ່າງ ໆ ແລະທຳເຫຼົ່ານັ້ນກໍສາມາດກໍ່ອັນຕະລາຍໃຫ້ແກ່ຜູ້ປະພຶດໄດ້ຈິງ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍ ປຽບຄືຮ່າງໂຄງກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຕ່ອນຊີ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າ ຕັດວ່າ ກາມທັງຫຼາຍປຽບຄືທວນໄຟຫຍ້າ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຂຸມຖ່ານໄຟ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຄວາມຝັນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຂອງທີ່ຢືມມາ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືໝາກໄມ້ຄາຕົ້ນ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຊຽງຊອຍຊີ້ນ ຯລຯ ພຣະຜູ້ມີພຣະພາກຕັດວ່າ ກາມທັງຫຼາຍປຽບຄືຫອກຫຼາວ ຯລຯ ພຣະຜູ້ມີພຣະພາກເຈົ້າຕັດວ່າ ກາມທັງຫຼາຍປຽບຄືຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ

ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຖືກພິກຂຸເຫຼົ່ານັ້ນຕັກເຕືອນແຕ່ກໍຍັງກ່າວດ້ວຍຄວາມຍຶດໝັ້ນຖືໝັ້ນທິດຖິບາບນັ້ນຢູ່ແນວນັ້ນວ່າ "ເປັນແນວນັ້ນແທ້ ທ່ານທັງຫຼາຍ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ"

ພິກຂຸເຫຼົ່ານັ້ນບໍ່ອາດຈະປົດເປື້ອງພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຈາກທິດຖິບາບນັ້ນໄດ້ ບັດແລ້ວພິກຂຸທັງຫຼາຍເຫຼົ່ານັ້ນຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ເມື່ອເຖິງແລ້ວຈຶ່ງຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງວ່າ "ອະຣິດຖະ ໄດ້ຂ່າວວ່າ ທິດຖິບາບແນວນີ້ໄດ້ເກີດຂຶ້ນແກ່ທ່ານວ່າ "ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ

ຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກີ່ອັນຕະລາຍກໍບໍ່ສາມາດກີ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ" ແມ່ນບໍ?"

ພິກຂຸອະຣິດຖະທູນຮັບວ່າ "ເປັນແນວນັ້ນແທ້ຂ້ານ້ອຍ ຂ້າພຣະອົງຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າ ຕັດວ່າເປັນທຳກີ່ອັນຕະລາຍກໍບໍ່ສາມາດກີ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ"

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວໄດ້ແນວໃດ ໂມຄະບຸຣຸດ ເຮົາກ່າວທຳທີ່ກີ່ອັນຕະລາຍວ່າເປັນທຳກີ່ອັນຕະລາຍໄວ້ໂດຍປະການຕ່າງໆ ແລະທຳເຫຼົ່ານັ້ນກໍສາມາດກີ່ອັນຕະລາຍໃຫ້ແກ່ຜູ້ປະພຶດໄດ້ຈິງ ບໍ່ແມ່ນບໍ ເຮົາກ່າວວ່າ ກາມທັງຫຼາຍມີຄວາມຍິນດີໜ້ອຍ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ເຮົາກ່າວວ່າ ກາມທັງຫຼາຍປຽບຄືຮ່າງໂຄງກະດູກ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ເຮົາກ່າວວ່າ ກາມທັງຫຼາຍ ປຽບຄືຕ່ອນຊີ້ນ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືທອນໄຟຫຍ້າ ຯລຯ ເຮົາກ່າວວ່າ ກາມທັງຫຼາຍ ປຽບຄືຂຸມຖ່ານໄຟ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືຄວາມຝັນ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືຂອງທີ່ຢືມມາ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືໝາກໄມ້ຄາຕົ້ນ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືຂຽງຊອຍຊີ້ນ ຯລຯ ເຮົາກ່າວວ່າ ກາມທັງຫຼາຍ ປຽບຄືຫອກຫຼາວ ຯລຯ ເຮົາກ່າວວ່າ ກາມທັງຫຼາຍປຽບຄືຫົວງູ ມີທຸກຫຼາຍ ມີຄວາມຄັບແຄ້ນຫຼາຍ ໃນກາມນີ້ມີໂທດຢ່າງຍິ່ງ ໂມຄະບຸຣຸດ ກໍເມື່ອເປັນແນວນີ້ ທ່ານຊື່ວ່າກ່າວຕູ່ເຮົາດ້ວຍທິດຖີທີ່ຍຶດຖືໄວ້ຜິດ ຊື່ວ່າທຳລາຍຕົນເອງ ແລະຊື່ວ່າປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ໂມຄະບຸຣຸດ ຂໍ້ນັ້ນຈັກເປັນໄປເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ທ່ານຕະຫຼອດການລະນານ ໂມຄະບຸຣຸດ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖີບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ

## ວິທີລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖີບາບແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖີບາບແນວນີ້ ຄື ເບື້ອງຕົ້ນເພິ່ງໂຈດພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ບັດແລ້ວໃຫ້ພິກຂຸອະຣິດຖະໃຫ້ການແລ້ວຈຶ່ງປັບອາບັດ ເມື່ອປັບອາບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໗໗] “ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງມີທິດຖິບາບເກີດຂຶ້ນວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ” ພິກຂຸອະຣິດຖະນັ້ນບໍ່ຍອມສະລະທິດຖິນັ້ນ ຖ້າສົງພ້ອມແລ້ວ ເພິ່ງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະ ຫ້າມສົມໂພກກັບສົງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກ ແຮ້ງມີທິດຖິບາບເກີດຂຶ້ນວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ” ພິກຂຸອະຣິດຖະນັ້ນບໍ່ຍອມລະທິດຖິນັ້ນ ສົງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດ ບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຄັ້ງທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ

ຄັ້ງທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງມີທິດຖິບາບເກີດຂຶ້ນວ່າ ເຮົາຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈົນເຖິງວ່າທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນທຳກໍ່ອັນຕະລາຍ ກໍບໍ່ສາມາດກໍ່ອັນຕະລາຍແກ່ຜູ້ປະພຶດໄດ້ຈິງດອກ” ພິກຂຸອະຣິດຖະນັ້ນບໍ່ຍອມລະທິດຖິນັ້ນ ສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ທ່ານອົງໃດເຫັນດ້ວຍກັບການລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ສົງລົງແລ້ວແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸທັງຫຼາຍ ພວກທ່ານຈົ່ງບອກພິກຂຸໃນອາວາດຕໍ່ ໆ ໄປວ່າ “ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຫ້າມສົມໂພກ ກັບສົງ

## ອະທຳມະກຳມະທະວາທະສະກະ

## ວ່າດ້ວຍອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບທີ່ບໍ່ຊອບທຳ ໑໔ ໝວດ

### ໝວດທີ ໑

[໕໗] ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ
໒. ລົງໂດຍບໍ່ສອບຖາມ
໓. ບໍ່ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

### ໝວດທີ ໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ສະແດງແລ້ວ ຯລຯ

### ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງລັບຫຼັງ
໔. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງໂດຍບໍ່ສອບຖາມ
໔. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໖

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ລົງຕາມປະຕິຍານ
໔. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນບໍ່ຕ້ອງອາບັດ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ ຯລຯ

## ໝວດທີ ໙

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ສະແດງແລ້ວ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໂຈດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍບໍ່ຊອບທຳ
໓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

**ອະທຳມະກຳມະທະວາທະສະກະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

## ທຳມະກຳມະທະວາທະສະກະ

## ວ່າດ້ວຍອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບທີ່ຊອບທຳ ໑໒ ໝວດ

## ໝວດທີ ໑

[໖໗] ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍສອບຖາມກ່ອນ
໓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

## ໝວດທີ ໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ
໓. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ ຯລຯ

## ໝວດທີ ໓

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ
໒. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ
໓. ປັບອາບັດກ່ອນແລ້ວຈຶ່ງລົງ ຯລຯ

## ໝວດທີ ໔

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຕໍ່ໜ້າ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໕

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງໂດຍສອບຖາມກ່ອນ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໖

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຕາມປະຕິຍານ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ລົງຍ້ອນຕ້ອງອາບັດ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໗

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ເປັນເທສະນາຄາມີນີ ໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໘

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ລົງຍ້ອນອາບັດທີ່ຍັງບໍ່ໄດ້ສະແດງ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ຯລຯ

## ໝວດທີ ໑໐

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໂຈດກ່ອນແລ້ວຈຶ່ງລົງ

໒. ລົງໂດຍຊອບທຳ

໓. ສົງພ້ອມພຽງກັນລົງ ຯລຯ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ຯລຯ

## ໝວດທີ ໑໑

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຯລຯ ຄື

໑. ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ

໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ໆລໆ

## ໝວດທີ ໑໒

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ອີກແນວໜຶ່ງ ໆລໆ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໒. ລົງໂດຍຊອບທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ທີ່ຈັດວ່າເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີ

**ທຳມະກຳມະທະວາທະສະກະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

## ອາກັງຂະມານະສັກກະ

**ວ່າດ້ວຍສົງມຸ້ງຫວັງຈະລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຝ ໝວດ**

## ໝວດທີ ໑

[໓໗] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ຄື

໑. ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລິຫັດດ້ວຍການຄຸກຄີກັບຄະລິຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໑)

## ໝວດທີ ໒

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ມີສີນວິບັດໃນອະທິສີນ
໒. ມີອາຈາຣະວິບັດໃນອັດຊາຈານ
໓. ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ອີກແນວໜຶ່ງ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸ ໓ ອົງ ເຫຼົ່ານີ້ແລ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງມີສີນວິບັດໃນອະທິສີນ
໒. ອົງໜຶ່ງມີອາຈາຣະວິບັດໃນອັດຊາຈານ
໓. ອົງໜຶ່ງມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸ ໓ ອົງ ເຫຼົ່ານີ້ແລ (໕)

## ໝວດທີ ໖

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ
໒. ອົງໜຶ່ງກ່າວຕິຕຽນພຣະທຳ
໓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໖)

**ອາກັງຂະມານະສັກກະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

## ເຕຈັດຕາລີສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໔໓ ຂໍ້ໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

[໗໐] ພິກຂຸທັງຫຼາຍ ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນ ດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບນັ້ນອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
ຯລຯ
໓໖. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໓໗. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓໘. ບໍ່ເພິ່ງກະທຳການສອບສວນ
໓໙. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໔໐. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໔໑. ບໍ່ເພິ່ງໂຈດພິກຂຸອື່ນ
໔໒. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໔໓. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

**ເຕຈັດຕາລີສະວັດຕະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

## ສົງລົງໂທດແລະລະງັບກຳ

[໗໑] ຕໍ່ມາ ສົງໄດ້ລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງ ຫ້າມສົມໂພກກັບສົງ ທ່ານຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບຈຶ່ງສິກ

ພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້ານົກແຮ້ງຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບຈຶ່ງສິກນໍ” ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງແລ້ວສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸອະຣິດຖະຜູ້ມີບັນພະບຸຣຸດເປັນພານຂ້ານົກແຮ້ງ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວສິກ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳນີ້ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງ ໂມຄະບຸຣຸດນັ້ນ ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບຈຶ່ງສິກນໍ ການກະທຳແບບນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼື ເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງຂຶ້ນໄດ້ເລີຍ ແທ້ຈິງກັບຈະເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສກໍບໍ່ເຫຼື້ອມໃສໄປເລີຍ ຄົນທີ່ເຫຼື້ອມໃສຢູ່ແລ້ວລາງພວກກໍຈະກາຍເປັນອື່ນໄປ" ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແບບນັ້ນ ສົງຈົ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

## ນັບປະຕິບັດສຳເພຕັບພະເຕຈັດຕາລີສະກະ

ວ່າດ້ວຍອົງ ໔໑ ຂອງພິກຂຸທີ່ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

## ໝວດທີ ໑

[໗໔] ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ໃຫ້ອຸປະສົມບົດ
໒. ໃຫ້ນິໄສ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

## ໝວດທີ ໘

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນການບໍ່ສະລະທິດຖິບາບອີກ
໒. ຕ້ອງອາບັດອື່ນທຳນອງດຽວກັນ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸ ຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ๗๘๗

## ໝວດທີ ໙

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸ ຜູ້ປະກອບດ້ວຍອົງ ໙ ຄື

໑. ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ກະທຳການສອບສວນ
໔. ເລີ່ມອະນຸວາທາທິກອນ
໕. ຂໍໂອກາດພິກຂຸອື່ນ
໖. ໂຈດພິກຂຸອື່ນ
໗. ໃຫ້ພິກຂຸອື່ນໃຫ້ການ
໙. ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງບໍ່ເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸ ຜູ້ປະກອບດ້ວຍອົງ ໙ ເຫຼົ່ານີ້ແລ

**ນັບປະຕິປັດສຳເພຕັບພະເຕຈັດຕາລີສະກະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

# ປະຕິປັດສຳເພຕັບພະເຕຈັດຕາລີສະກະ

## ວ່າດ້ວຍອົງ ໔໓ ຂອງພິກຂຸທີ່ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

### ໝວດທີ ໑

[໗໓] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ ພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ບໍ່ໃຫ້ອຸປະສົມບົດ
໒. ບໍ່ໃຫ້ນິໄສ
໓. ບໍ່ໃຊ້ສາມະເນນອຸປັດຖາກ
໔. ບໍ່ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນພິກຂຸນີ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ

### ໝວດທີ ໒

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ອີກແນວໜຶ່ງ ຄື

໑. ບໍ່ຕ້ອງອາບັດທີ່ເປັນເຫດໃຫ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບອີກ
໒. ບໍ່ຕ້ອງອາບັດອື່ນທຳນອງດຽວກັນ
໓. ບໍ່ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ບໍ່ຕຳໜິກຳ
໕. ບໍ່ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ເຫຼົ່ານີ້ແລ ໗໘໗

## ໝວດທີ ໙

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໙ ຄື

໑. ບໍ່ງົດອຸໂປສົດແກ່ປະກະຕັດຕະພິກຂຸ
໒. ບໍ່ງົດປະວາຣະນາແກ່ປະກະຕັດຕະພິກຂຸ
໓. ບໍ່ກະທຳການສອບສວນ
໔. ບໍ່ເລີ່ມອະນຸວາທາທິກອນ
໕. ບໍ່ຂໍໂອກາດພິກຂຸອື່ນ
໖. ບໍ່ໂຈດພິກຂຸອື່ນ
໗. ບໍ່ໃຫ້ພິກຂຸອື່ນໃຫ້ການ
໙. ບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຜູ້ປະກອບດ້ວຍອົງ ໙ ເຫຼົ່ານີ້ແລ

**ປະຕິປັດສຳເພຕັບພະເຕຈັດຕາລີສະກະໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຈົບ**

## ວິທີລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລະກຳມະວາຈາ

[໗໔] ພິກຂຸທັງຫຼາຍ ສົງເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແນວນີ້ ຄື ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂ້ານ້ອຍຈຶ່ງຂໍລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ

ເພິ່ງຂໍແມ່ນເທື່ອທີ ໒ ໆລໆ

ເພິ່ງຂໍແມ່ນເທື່ອທີ ໓ ໆລໆ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນ ບໍ່ສະລະທິດຖິບາບແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳ

ຍ້ອນບໍ່ສະລະທິດຖິບາບ ຖ້າສົງພ້ອມແລ້ວເພິ່ງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບ ສົງລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຄັ້ງທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ຄັ້ງທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວ ກັບປະພຶດຊອບ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ສົງລະງັບອຸກເຂປະນີຍະກຳ ຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ສົງລະງັບແລ້ວແກ່ພິກຂຸນີ້ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

**ອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບທີ ໗ ຈົບ**

**ກຳມະຂັນທະກະທີ ໑ ຈົບ**

## ໃນຂັນທະກະນີ້ມີ ໗ ເລື້ອງ

## ລວມເລື້ອງທີ່ມີໃນກຳມະຂັນທະກະ

ເລື້ອງພິກຂຸຊື່ປັນທຸກະ ແລະຊື່ໂລຫິດຕະກະກໍ່ຄວາມໝາງໃຈເອງ
ໄດ້ເຂົ້າໄປຫາພິກຂຸຜູ້ປະພຶດຄືກັນ ແລ້ວກໍ່ຄວາມໝາງໃຈ
ຍິ່ງຂຶ້ນ ຄວາມໝາງໃຈທີ່ຍັງບໍ່ເກີດກໍເກີດ ທີ່ເກີດແລ້ວກໍຂະຫຍາຍໂຕອອກໄປ
ພິກຂຸຜູ້ມັກໜ້ອຍມີສິນເປັນທີ່ຮັກພາກັນຕຳໜິທ່າມກາງບໍລິສັດ

ພຣະພຸດທະຊິນນະເຈົ້າຜູ້ຊົງເປັນພຣະສະຍຳພູອັກຄະຣະບຸກຄົນ
ຊົງພຣະສັດທຳ ຮັບສັ່ງໃຫ້ລົງຕັດຊະນີຍະກຳທີ່ນະຄອນສາວັດຖີ

ຕັດຊະນິຍະກຳທີ່ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ຄື

**ໝວດທີ ໑**

ລົງລັບຫຼັງ ລົງໂດຍບໍ່ສອບຖາມ ບໍ່ລົງຕາມປະຕິຍານ

**ໝວດທີ ໒**

ລົງຍ້ອນບໍ່ຕ້ອງອາບັດ ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ ລົງຍ້ອນອາບັດທີ່ສະແດງແລ້ວ

**ໝວດທີ ໓**

ບໍ່ໂຈດກ່ອນແລ້ວຈຶ່ງລົງ ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ

**ໝວດທີ ໔**

ລົງລັບຫຼັງ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໕**

ລົງໂດຍບໍ່ສອບຖາມ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໖**

ບໍ່ລົງຕາມປະຕິຍານ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໗**

ລົງຍ້ອນບໍ່ຕ້ອງອາບັດ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໘**

ລົງຍ້ອນອາບັດທີ່ເປັນອະເທສະນາຄາມີນີ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໙**

ລົງຍ້ອນອາບັດທີ່ສະແດງແລ້ວ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໑໐**

ບໍ່ໂຈດກ່ອນແລ້ວຈຶ່ງລົງ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໑໑**

ບໍ່ໃຫ້ຈຳເລີຍໃຫ້ການກ່ອນແລ້ວຈຶ່ງລົງ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

**ໝວດທີ ໑໒**

ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ ລົງໂດຍບໍ່ຊອບທຳ ສົງແບ່ງພວກກັນລົງ

ນັກວິໄນເພິ່ງຮູ້ຝ່າຍຖືກຕາມໄນກົງກັນຂ້າມກັບຝ່າຍທີ່ຜິດ

## ສົງເມື່ອມຸ້ງຫວັງ ເພິ່ງລົງຕັດຊະນີຍະກຳແກ່ພິກຂຸ ໓ ຈຳພວກ ຄື

໑. ຜູ້ກໍ່ຄວາມໝາງໃຈ ໂງ່ຈ້ຳ ແລະຄຸກຄີກັບຄະລືຫັດ
໔. ຜູ້ວິບັດໃນອະທິສີນ ໃນອັດຊາຈານ ແລະໃນອະຕິທິດຖິ
໓. ຜູ້ກ່າວຕິຕຽນພຣະພຸດທະເຈົ້າ ພຣະທຳ ພຣະສົງ

## ສົງເພິ່ງລົງຕັດຊະນີຍະກຳແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງກໍ່ຄວາມໝາງໃຈ ໂງ່ຈ້ຳ ແລະຄຸກຄີກັບຄະລືຫັດ
໔. ອົງໜຶ່ງວິບັດໃນອະທິສີນ ໃນອັດຊາຈານ ແລະໃນອະຕິທິດຖິ
໓. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ ພຣະທຳ ພຣະສົງ

ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວຕ້ອງປະພຶດໂດຍຊອບແນວນີ້ ຄື ບໍ່ໃຫ້ອຸປະສົມບົດ ບໍ່ໃຫ້ນິໄສ ບໍ່ໃຊ້ສາມະເນນອຸປັດຖາກ ບໍ່ສັ່ງສອນພິກຂຸນີ ເຖິງໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ສັ່ງສອນ ບໍ່ຕ້ອງອາບັດນັ້ນອີກ ບໍ່ຕ້ອງອາບັດອື່ນທຳນອງດຽວກັນນັ້ນແລະທີ່ຊົ່ວຊາມກວ່ານັ້ນ ບໍ່ຕຳໜິກຳ ບໍ່ຕຳໜິພິກຂຸຜູ້ເຮັດກຳ ບໍ່ງົດອຸໂປສົດແລະປະວາຣະນາແກ່ປະກະຕັດຕະພິກຂຸ ບໍ່ກະທຳການສອບຖາມ ບໍ່ເລີ່ມອະນຸວາທາທິກອນ ບໍ່ຂໍໂອກາດພິກຂຸອື່ນ ບໍ່ໂຈດພິກຂຸອື່ນ ບໍ່ໃຫ້ພິກຂຸອື່ນໃຫ້ການ ແລະບໍ່ຊັກຊວນກັນກໍ່ຄວາມຜິດຖຽງ

ສົງບໍ່ເພິ່ງລະງັບຕັດຊະນີຍະກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໕ ຄື ໃຫ້ອຸປະສົມບົດ ໃຫ້ນິໄສ ໃຊ້ສາມະເນນອຸປັດຖາກ ສັ່ງສອນພິກຂຸນີ ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍຍັງສັ່ງສອນ ແລະອົງ ໕ ອີກແນວໜຶ່ງ ຄື ຕ້ອງອາບັດນັ້ນ ຕ້ອງອາບັດອື່ນທຳນອງດຽວກັນນັ້ນ ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ ຕຳໜິກຳ ຕຳໜິພິກຂຸຜູ້ເຮັດກຳ

ພິກຂຸຜູ້ປະກອບດ້ວຍອົງ ໗ ຄື ງົດອຸໂປສົດ ປະວາຣະນາ ກະທຳການສອບສວນ ເລີ່ມອະນຸວາທາທິກອນ ໃຫ້ເຮັດໂອກາດ ໂຈດພິກຂຸອື່ນ ໃຫ້ພິກຂຸອື່ນໃຫ້ການແລະໃຫ້ຕໍ່ສູ້ອະທິກອນກັນ ຍ່ອມບໍ່ພົ້ນຄວາມຜິດຈາກຕັດຊະນີຍະກຳ

ນັກວິໄນເພິ່ງຮູ້ຝ່າຍຖືກຕາມໄນກົງກັນຂ້າມກັບຝ່າຍທີ່ຜິດນັ້ນ

ພິກຂຸເສີຍຍະສະກະໂງ່ຈ້າ ມີອາບັດຫຼາຍແລະຄຸກຄີກັບ ຄະລືຫັດ ພຣະສຳພຸດທະເຈົ້າຜູ້ຊົງເປັນພຣະມະຫາມຸນີ ຮັບສັ່ງໃຫ້ລົງ ນີຍະສະກຳ

ພິກຂຸຊື່ອັດສະຊິແລະຊື່ປຸນັບພະສຸກະຢູ່ໃນກີຕາຄີຣີຊົນນະບົດ ບໍ່ສັງລວມ ປະພຶດບໍ່ສົມຄວນຕ່າງ ໆ ພຣະສຳພຸດຊົນນະເຈົ້າ ຮັບສັ່ງໃຫ້ລົງປັບພາຊະນີຍະກຳໃນນະຄອນສາວັດຖີ

ພິກຂຸສຸທຳຢູ່ປະຈຳໃນອາວາດຂອງຈິດຕະຄະຫະບໍດີ ໃນເມືອງ ມັດສິກາສົນ ດ່າຈິດຕະອຸປາສົກດ້ວຍຄຳຫຍາບ ກະທົບຊາດ ກຳເນີດ ພຣະຕະຖາຄົດຮັບສັ່ງໃຫ້ລົງປະຕິສາຣະນີຍະກຳ

ພິກຂຸສັນນະບໍ່ປາຖະໜາຈະຮູ້ເຫັນອາບັດ ພຣະຊົນນະເຈົ້າຜູ້ອຸດົມ ຮັບສັ່ງໃຫ້ລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດໃນນະຄອນໂກສຳພີ

ພິກຂຸສັນນະບໍ່ປາຖະໜາຈະເຮັດຄືນອາບັດນັ້ນ ພຣະພຸດທະເຈົ້າ ຜູ້ຊົງເປັນນາຍົກພິເສດຮັບສັ່ງໃຫ້ລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

ພິກຂຸອະຣິດຖະເກີດທິດຖິບາບໄປຍ້ອນຄວາມຈ້າ ພຣະຊົນນະເຈົ້າ ຮັບສັ່ງໃຫ້ລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິ

ນີຍະສະກຳ ປັບພາຊະນີຍະກຳແລະປະຕິສາຣະນີຍະກຳກໍຄືກັນ

ບົດເຫຼົ່ານີ້ມີເກີນໃນປັບພາຊະນີຍະກຳ ຄື ຫຼິ້ນຄະນອງ ປະພຶດບໍ່ສົມຄວນ (ອະນາຈານ) ລຶບລ້າງພຣະບັນຍັດແລະມິດສາຊີບ ຍ້ອນບໍ່ເຫັນບໍ່ເຮັດຄືນອາບັດ ແລະບໍ່ສະລະທິດຖິບາບ

ບົດເຫຼົ່ານີ້ມີເກີນໃນປະຕິສາຣະນີຍະກຳ ຄື ມຸ້ງຄວາມບໍ່ມີລາບ ກ່າວຕຳໜິ ມີຊື່ວ່າປັນຈະກະ ໔ ໝວດ ໆ ລະ ໕

ແມ່ນຕັດຊະນີຍະກຳແລະນີຍະສະກຳກໍຄືກັນ ປັບພາຊະນີຍະກຳ ແລະປະຕິສາຣະນີຍະກຳ ຍ່ອນແລະຍິ່ງກວ່າກັນ ໗ ຂໍ້ ໔ ໝວດ ການຈຳແນກອຸກເຂປະນີຍະກຳ ໓ ຢ່າງກໍເຊັ່ນດຽວກັນ ນັກວິໄນເພິ່ງຮູ້ກຳທີ່ເຫຼືອຕາມໄນແຫ່ງຕັດຊະນີຍະກຳ

**ກຳມະຂັນທະກະ ຈົບ**

# ໘. ປາຣິວາສິກະຂັນທະກະ

## ໑. ປາຣິວາສິກະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຢູ່ປະຣິວາດ

[໗໕] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸທັງຫຼາຍຜູ້ຢູ່ປະຣິວາດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ฯລฯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຜູ້ຢູ່ປະຣິວາດຈຶ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຜູ້ຢູ່ປະຣິວາດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ฯລฯ ວ່າ "ພິກຂຸທັງຫຼາຍ ເປັນຫຍັງພິກຂຸທັງຫຼາຍຜູ້ຢູ່ປະຣິວາດຈຶ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດ

ສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ຮັບບາດແລະຈີວອນ ຖູຫຼັງໃຫ້ໃນເວລາອາບນ້ຳນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຫຼືເຮັດຄົນທີ່ເຫຼື້ອມໃສຢູ່ແລ້ວໃຫ້ເຫຼື້ອມໃສຍິ່ງ

ຂຶ້ນໄດ້ເລີຍ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມິກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປະຣິວາດບໍ່ເພິ່ງຍິນດີການທີ່ປະກະຕັດຕະ ພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ ອົງໃດຍິນດີ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການທີ່ພິກຂຸທັງຫຼາຍຜູ້ຢູ່ປະຣິວາດນຳກັນຂາບໄຫວ້ ລຸກຮັບປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ ຕາມລຳດັບພັນສາ

ພິກຂຸທັງຫຼາຍ ເຮົາອະນຸຍາດກິດ ໕ ຢ່າງ ຄື ອຸໂປສົດ ປະວາຣະນາ ຜ້າອາບນ້ຳຝົນການສະລະພັດ ພັດເພື່ອພິກຂຸຜູ້ຢູ່ປະຣິວາດຕາມລຳດັບພັນສາ

ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຢູ່ປະຣິວາດໂດຍວິທີທີ່ພິກຂຸຜູ້ຢູ່ປະຣິວາດທັງຫຼາຍເພິ່ງປະພຶດ

## ຂໍ້ວັດປະຕິບັດ ໙໔ ຂໍ້ຂອງພິກຂຸຜູ້ຢູ່ປະຣິວາດ

[໗໖] ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປະຣິວາດເພິ່ງປະພຶດໂດຍຊອບ ການປະພຶດໂດຍຊອບໃນເລື້ອງນັ້ນດັ່ງນີ້ ພິກຂຸຜູ້ຢູ່ປະຣິວາດ

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ສົງໃຫ້ປະຣິວາດນັ້ນອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ

໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ
໑໙. ບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງນັ່ງທາງໜ້າປະກະຕັດຕະພິກຂຸ
໒໑. ເພິ່ງພໍໃຈອາສະນະສຸດທ້າຍ ບ່ອນນອນສຸດທ້າຍ ວິຫານສຸດທ້າຍຂອງສົງທີ່ຈະໃຫ້ພິກຂຸຜູ້ຢູ່ປະຣິວາດນັ້ນ
໒໒. ບໍ່ເພິ່ງມີປະກະຕັດຕະພິກຂຸເປັນປຸເຣສະມະນະ ຫຼືເປັນປັດສາສະມະນະເຂົ້າຕະກູນ
໒໓. ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ
໒໔. ບໍ່ເພິ່ງສະມາທານປິນດະປາຕິກັງຄະທຸດົງ
໒໕. ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ຍ້ອນປັດໄຈນັ້ນດ້ວຍຄິດວ່າ "ຄົນຢ່າໄດ້ຮູ້ຈັກເຮົາ

[໗໗] ໒໖. ເປັນອາຄັນຕຸກະໄປກໍເພິ່ງບອກໃຫ້ຮູ້[๑]
໒໗. ມີອາຄັນຕຸກະມາກໍເພິ່ງບອກໃຫ້ຮູ້
໒໘. ເພິ່ງບອກໃນມື້ອຸໂປສົດ
໒໙. ເພິ່ງບອກໃນມື້ປະວາຣະນາ
໓໐. ຖ້າອາພາດ ເພິ່ງສົ່ງທູດໃຫ້ໄປບອກ
໓໑. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໒. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໓. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໔. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໕. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໖. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະ ລາຍ

໓໗. ບໍ່ເພິ່ງອອກຈາກອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດ ທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໘. ບໍ່ເພິ່ງອອກຈາກອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດທີ່ບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸເວັ້ນແຕ່ມີອັນຕະລາຍ

໓໙. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

[໑໘] ໔໐. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໑. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸ ເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໒. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໓. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດມີພິກຂຸເຊິ່ງມີພິກຂຸ ເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນ ຕະລາຍ

໔໔. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໕. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

[໑໙] ໔໖. ບໍ່ເພິ່ງອອກຈາກອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໗. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໘. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

[໘໐] ໔໙. ເພິ່ງອອກຈາກອາວາດທີ່ມີພິກຂຸໄປອາວາດທີ່ມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໐. ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໑. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໒. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸເຊິ່ງມີພິກຂຸ ເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໓. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໔. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໕. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດທີ່ມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໖. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໗. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

[໗໑] ໕໗. ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ປະຣິວາດບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບ ປະກະຕັດຕະພິກຂຸ

໕໘. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໖໐. ບໍ່ເພິ່ງຢູ່ໃນອາວາດຫຼືໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໖໑. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ

໖໒. ເພິ່ງນິມົນປະກະຕັດຕະພິກຂຸໃຫ້ນັ່ງ

໖໓. ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບປະກະຕັດຕະພິກຂຸ

໖໔. ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໖໕. ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

໖໖. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບປະກະຕັດຕະພິກຂຸ

໖໗. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນບ່ອນຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ

໖໘. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

[໗໒]໖໙-໗໙. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຢູ່ປະຣິວາດທີ່ມີພັນສາແກ່ກວ່າ ໆລໆ ກັບພິກຂຸຜູ້ຄວນດຶງເຂົ້າຫາອາບັດເດີມ ໆລໆ ກັບພິກຂຸຜູ້ຄວນແກ່ມານັດ ໆລໆ ກັບພິກຂຸຜູ້ປະພຶດມານັດ ໆລໆ ກັບພິກຂຸຜູ້ຄວນແກ່ອັບພານ ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ໆລໆ ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ໆລໆ ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບພິກຂຸຜູ້ຄວນແກ່ອັບພານ

໙໐. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໙໑. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

໙໒. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ຄວນແກ່ອັບພານ

໙໓. ເມື່ອພິກຂຸຜູ້ຄວນແກ່ອັບພານ ຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ

໙໔. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

ພິກຂຸທັງຫຼາຍ ຖ້າສົງມີພິກຂຸຜູ້ຢູ່ປະຣິວາດເປັນອົງທີ ໔ ເພິ່ງໃຫ້ປະຣິວາດດຶງເຂົ້າຫາອາບັດເດີມ ໃຫ້ມານັດ ສົງມີພິກຂຸຜູ້ຢູ່ປະຣິວາດນັ້ນເປັນອົງທີ ໒໐ ເພິ່ງອັບພານ ກຳນັ້ນ ບໍ່ຈັດເປັນກຳ ແລະບໍ່ຄວນເຮັດ

**ຂໍ້ວັດປະຕິບັດ ໙໔ ຂໍ້ຂອງພິກຂຸຜູ້ຢູ່ປະຣິວາດ ຈົບ**

# ຣັດຕິເສດ

## ວ່າດ້ວຍເຫດໃຫ້ຂາດຣາຕີ ໓ ຢ່າງ

[໗໓] ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບັດແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ "ຣັດຕິເສດ[໑] ຂອງພິກຂຸຜູ້ຢູ່ປະຣິວາດມີທີ່ໃດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຣັດຕິເສດຂອງພິກຂຸຜູ້ຢູ່ປະຣິວາດມີ ໓ ຢ່າງ ຄື

(໑) ສະຫະວາສະ (ການຢູ່ຮ່ວມກັນ) (໒) ວິບປະວາສະ (ການຢູ່ປາສະຈາກ) (໓) ອະນາໂຣຈະນາ (ການບໍ່ບອກ)[໒] ອຸບາລີ ຣັດຕິເສດຂອງພິກຂຸຜູ້ຢູ່ປະຣິວາດມີ ໓ ຢ່າງນີ້ແລ

# ຊົງອະນຸຍາດໃຫ້ເກັບປະຣິວາດ

[໗໔]ສະໄໝນັ້ນ ພິກຂຸສົງມາປະຊຸມກັນເປັນຈຳນວນຫຼາຍໃນນະຄອນສາວັດຖີ ພິກຂຸທັງຫຼາຍຜູ້ຢູ່ປະຣິວາດບໍ່ສາມາດຈະເຮັດປະຣິວາດໃຫ້ບໍລິສຸດໄດ້ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບປະຣິວາດ

# ວິທີເກັບປະຣິວາດ

ພິກຂຸທັງຫຼາຍ ພິກຂຸເພິ່ງເກັບປະຣິວາດແນວນີ້ພິກຂຸຜູ້ຢູ່ປະຣິວາດນັ້ນເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ ວ່າ "ຂ້າພະເຈົ້າເກັບປະຣິວາດ" ປະຣິວາດຍ່ອມເປັນອັນເກັບແລ້ວ ຫຼືກ່າວວ່າ "ຂ້າພະເຈົ້າເກັບ ຂໍ້ວັດປະຕິບັດ" ຂໍ້ວັດປະຕິບັດຍ່ອມເປັນອັນເກັບແລ້ວ

# ຊົງອະນຸຍາດໃຫ້ສະມາທານປະຣິວາດ

[໗໕] ສະໄໝນັ້ນ ພິກຂຸທັງຫຼາຍເດີນທາງອອກຈາກນະຄອນສາວັດຖີໄປໃນບ່ອນຕ່າງ ໆ ພິກຂຸ ທັງຫຼາຍຜູ້ຢູ່ປະຣິວາດບໍ່ສາມາດເຮັດປະຣິວາດໃຫ້ບໍລິສຸດໄດ້ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີ ພຣະພາກໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະມາທານປະຣິວາດ

### ວິທີສະມາທານປະຣິວາດ

ພິກຂຸທັງຫຼາຍ ພິກຂຸເພິ່ງສະມາທານປະຣິວາດແບບນີ້ ພິກຂຸຜູ້ຢູ່ປະຣິວາດເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວແບບນີ້ວ່າ "ຂ້າພະເຈົ້າສະມາທານປະຣິວາດ" ປະຣິວາດຍ່ອມເປັນອັນສະມາທານແລ້ວ ຫຼືກ່າວວ່າ "ຂ້າພະເຈົ້າສະມາທານຂໍ້ວັດປະຕິບັດ" ຂໍ້ວັດປະຕິບັດຍ່ອມເປັນອັນສະມາທານແລ້ວ

**ປາຣິວາສິກະວັດຕະ ຈົບ**

## ໔. ມູລາຍະປະຕິກັດສະນາຣະຫະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ

[໗໖] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະ ຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸທັງຫຼາຍຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາ ອາບນ້ຳແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ການກະທຳຂອງພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸຜູ້ຄວນແກ່ການດຶງເຂົ້າຫາ

ອາບັດເດີມຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ຖູຫຼັງໃຫ້ໃນເວລາອາບນໍ້ານໍ ພິກຂຸທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕໍາໜິແລ້ວ ຯລຯ ຊົງສະແດງທໍາມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ຖູຫຼັງໃຫ້ໃນເວລາອາບນໍ້າ ຜູ້ໃດຍິນດີ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການທີ່ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມນໍາກັນຂາບໄຫວ້ລຸກຮັບ ຯລຯ ການຖູຫຼັງໃຫ້ເວລາອາບນໍ້າ ຕາມລໍາດັບພັນສາ

ພິກຂຸທັງຫຼາຍ ເຮົາອະນຸຍາດກິດ ໕ ຢ່າງ ຄື ອຸໂປສົດ ປະວາຣະນາ ຜ້າອາບນໍ້າຝົນ ການສະລະພັດ ພັດເພື່ອພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ຕາມລໍາດັບພັນສາ

ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມໂດຍວິທີທີ່ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມທັງຫຼາຍຕ້ອງປະພຶດ

ຂໍ້ວັດປະຕິບັດ ໗໙ ຂໍ້ຂອງພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ

[໗໗] ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມເພິ່ງປະພຶດຊອບ ການປະພຶດຊອບໃນເລື້ອງນັ້ນດັ່ງນີ້ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ສົງຕ້ອງເຮັດໃຫ້ຄວນແກ່ການດຶງເຂົ້າຫາອາບັດເດີມນັ້ນອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທໍານອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕໍາໜິກໍາ
໑໐. ບໍ່ເພິ່ງຕໍາໜິພິກຂຸຜູ້ເຮັດກໍາ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທໍາການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ

໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ
໑໙. ບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງນັ່ງທາງໜ້າປະກະຕັດຕະພິກຂຸ
໒໑. ເພິ່ງພໍໃຈອາສະນະສຸດທ້າຍ ບ່ອນນອນສຸດທ້າຍ ວິຫານສຸດທ້າຍຂອງສິ່ງທີ່ຈະໃຫ້ທ່ານ
໒໒. ບໍ່ເພິ່ງມີປະກະຕັດຕະພິກຂຸເປັນປຸເຣສະມະນະ ຫຼືເປັນປັດສາສະມະນະເຂົ້າຕະກູນ
໒໓. ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ
໒໔. ບໍ່ເພິ່ງສະມາທານປິນດະປາຕິກັງຄະທຸດົງ
໒໕. ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ຍ້ອນປັດໄຈນັ້ນດ້ວຍຄິດວ່າ "ຄົນຢ່າໄດ້ຮູ້ຈັກເຮົາ
໒໖. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໗. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໘. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໙. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໐. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໑. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໒. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດທີ່ບໍ່ມີພິກຂຸ ຯລຯ
໓໓. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດບໍ່ມີພິກຂຸ ຯລຯ

໓໔. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໕. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໖. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໓໗. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໘. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດມີພິກຂຸ ຯລຯ

໓໙. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໐. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໑. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ອາວາດມີພິກຂຸ ຯລຯ

໔໒. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໓. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໔. ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸເຊິ່ງມີພິກຂຸ ຯລຯ

໔໕. ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໖. ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໔໗. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

໔໘. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໙. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໐. ເພິ່ງອອກຈາກອາວາດ ຫຼື ສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

໕໑. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໕໒. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໓. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບປະກະຕັດຕະພິກຂຸ

໕໔. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໕. ບໍ່ເພິ່ງຢູ່ໃນອາວາດຫຼືໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໖. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ

໕໗. ເພິ່ງນິມົນປະກະຕັດຕະພິກຂຸໃຫ້ນັ່ງ

໕໘. ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບປະກະຕັດຕະພິກຂຸ

໕໙. ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໖໐. ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

໖໑. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບປະກະຕັດຕະພິກຂຸ

໖໒. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ

໖໓. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

໖໔-໗໔. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຢູ່ປະຣິວາດ ຯລຯ ກັບພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມທີ່ມີພັນສາແກ່ກວ່າ ຯລຯ ກັບພິກຂຸ ຜູ້ຄວນແກ່ມານັດ ຯລຯ ກັບພິກຂຸຜູ້ປະພຶດມານັດ ຯລຯ ກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບ ພິກຂຸຜູ້ຄວນແກ່ອັບພານ

໗໕. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໗໖. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

ກຖ. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ຄວນແກ່ອັບພານ
ກຖ. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ໃນທີ່ຈົງກົມຕໍ່າ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ
ກຓ. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

ພິກຂຸທັງຫຼາຍ ຖ້າສົງມີພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມເປັນອົງທີ ໔ ເພິ່ງໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດ ສົງມີພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດ ເດີມນັ້ນເປັນອົງທີ ໔໐ ເພິ່ງອັບພານ ກຳນັ້ນບໍ່ຈັດເປັນກຳ ແລະບໍ່ຄວນເຮັດ

**ຂໍ້ວັດປະຕິບັດ ກຓ ຂໍ້ຂອງພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ຈົບ**

**ມູລາຍະປະຕິກັດສະນາຣະຫະວັດຕະ ຈົບ**

# ໓. ມານັດຕາຣະຫະວັດຕະ

# ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຄວນແກ່ມານັດ

[໗໗]ສະໄໝນັ້ນ ພິກຂຸທັງຫຼາຍຜູ້ຄວນແກ່ມານັດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນໍ້າ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍຜູ້ຄວນແກ່ມານັດຈຶ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນໍ້ານໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງ ຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍຜູ້ຄວນແກ່ມານັດ ຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນໍ້າ ແມ່ນບໍ?
ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ການກະທຳຂອງພິກຂຸຜູ້ຄວນແກ່ມານັດ ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸຜູ້ຄວນແກ່ມານັດຈຶ່ງຍິນດີການທີ່ປະກະ

ຕັດຕະ ພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ ພິກຂຸທັງຫຼາຍ ການກະທຳແບບນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ມານັດ ບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳ ອົງໃດຍິນດີ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳຂອງພິກຂຸຜູ້ຄວນແກ່ມານັດນຳກັນ ຕາມລຳດັບພັນສາ

ພິກຂຸທັງຫຼາຍ ເຮົາອະນຸຍາດກິດ ໕ ຢ່າງ ຄື ອຸໂປສົດ ປະວາຣະນາ ຜ້າອາບນ້ຳຝົນ ການສະລະພັດ ພັດເພື່ອພິກຂຸຜູ້ຄວນແກ່ມານັດນຳກັນຕາມລຳດັບພັນສາ

ພິກຂຸທັງຫຼາຍ ຖ້າເປັນແບບນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຄວນແກ່ມານັດ ໂດຍວິທີທີ່ພິກຂຸຜູ້ຄວນແກ່ມານັດທັງຫຼາຍຕ້ອງປະພຶດ

## ຂໍ້ວັດປະຕິບັດ ໗໙ ຂໍ້ຂອງພິກຂຸຜູ້ຄວນແກ່ມານັດ

[໘໙] ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ມານັດເພິ່ງປະພຶດໂດຍຊອບ ການປະພຶດໂດຍຊອບໃນເລື້ອງນັ້ນດັ່ງນີ້ ພິກຂຸຜູ້ຄວນແກ່ມານັດ

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ສົງຕ້ອງເຮັດໃຫ້ເປັນຜູ້ຄວນແກ່ມານັດອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ
໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ

໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ
໑໙. ບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງນັ່ງທາງໜ້າປະກະຕັດຕະພິກຂຸ
໒໑. ເພິ່ງພໍໃຈອາສະນະສຸດທ້າຍ ບ່ອນນອນສຸດທ້າຍ ວິຫານສຸດທ້າຍຂອງສິ່ງທີ່ຈະໃຫ້ທ່ານ
໒໒. ບໍ່ເພິ່ງມີປະກະຕັດຕະພິກຂຸເປັນປຸເຣສະມະນະ ຫຼື ເປັນປັດສາສະມະນະເຂົ້າຕະກູນ
໒໓. ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ
໒໔. ບໍ່ເພິ່ງສະມາທານປິນດະປາຕິກັງຄະທຸດົງ
໒໕. ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ຍ້ອນປັດໄຈນັ້ນດ້ວຍຄິດວ່າ "ຄົນຢ່າໄດ້ຮູ້ຈັກເຮົາ
໒໖. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໗. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໘. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໒໙. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ຯລຯ
໓໐. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ຯລຯ
໓໑. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ
໓໒. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ຯລຯ
໓໓. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ຯລຯ

໓໔. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໕. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດເຊິ່ງມີພິກຂຸ ຯລຯ

໓໖. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ຯລຯ

໓໗. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໓໘. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ຯລຯ

໓໙. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໐. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໑. ບໍ່ເພິ່ງອອກຈາກອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດ ມີພິກຂຸ ຯລຯ

໔໒. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໓. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໔໔. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ

໔໕. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໖. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໔໗. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ

໔໘. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໙. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໐. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ

໕໑. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໕໒. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ

໕໓. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບປະກະຕັດຕະພິກຂຸ

໕໔. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໕. ບໍ່ເພິ່ງຢູ່ໃນອາວາດຫຼືໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໖. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ

໕໗. ເພິ່ງນິມົນປະກະຕັດຕະພິກຂຸໃຫ້ນັ່ງ

໕໘. ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບປະກະຕັດຕະພິກຂຸ

໕໙. ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໖໐. ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

໖໑. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບປະກະຕັດຕະພິກຂຸ

໖໒. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ

໖໓. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

໖໔-໗໔. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຢູ່ປະຣິວາດ ຯລຯ ກັບພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ຯລຯ ກັບພິກຂຸຜູ້ຄວນແກ່ມານັດທີ່ມີພັນສາແກ່ກວ່າ ຯລຯ ກັບພິກຂຸຜູ້ປະພຶດມານັດ ຯລຯ ກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບພິກຂຸຜູ້ຄວນແກ່ອັບພານ

໗໕. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໗໖. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

ກຖ. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ຄວນແກ່ອັບພານ
ກຕ. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ
ກຜ. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

ພິກຂຸທັງຫຼາຍ ຖ້າສົງມີພິກຂຸຜູ້ຄວນແກ່ມານັດເປັນອົງທີ ໔ ເພິ່ງໃຫ້ປະຣິວາດດຶງເຂົ້າຫາອາບັດເດີມ ໃຫ້ມານັດ ສົງມີພິກຂຸຜູ້ຄວນແກ່ມານັດນັ້ນເປັນອົງທີ ໔໐ ເພິ່ງອັບພານ ກຳນັ້ນບໍ່ຈັດເປັນກຳ ແລະບໍ່ຄວນເຮັດ

**ຂໍ້ວັດປະຕິບັດ ກຜ ຂໍ້ຂອງພິກຂຸຜູ້ຄວນແກ່ມານັດ ຈົບ**

**ມານັດຕາຣະຫະວັດຕະ ຈົບ**

# ໔. ມານັດຕະຈາຣິກະວັດຕະ

# ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ປະພຶດມານັດ

[໗໐] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ປະພຶດມານັດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຕັ້ງນ້ຳລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ ການຮັບບາດແລະຈີວອນ ການຖູຫຼັງໃຫ້ໃນເວລາອາບນ້ຳ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸຜູ້ປະພຶດມານັດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງ ຍ້ອນເລື້ອງນີ້ເປັນຕົ້ນເຫດ

ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸຜູ້ປະພຶດມານັດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳແມ່ນບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸຜູ້ປະພຶດມານັດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ ພິກຂຸທັງຫຼາຍ ການເຮັດແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ປະພຶດມານັດ ບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້ ນຳບ່ອນນອນມາໃຫ້ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳ ອົງໃດຍິນດີ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳຂອງພິກຂຸຜູ້ປະພຶດມານັດນຳກັນຕາມລຳດັບພັນສາ

ພິກຂຸທັງຫຼາຍ ເຮົາອະນຸຍາດກິດ ໕ ຢ່າງ ຄື ອຸໂປສົດ ປະວາຣະນາ ຜ້າອາບນ້ຳຝົນ ການສະລະພັດ ພັດເພື່ອພິກຂຸຜູ້ປະພຶດມານັດນຳກັນຕາມລຳດັບພັນສາ

ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ປະພຶດມານັດໂດຍວິທີທີ່ພິກຂຸຜູ້ປະພຶດມານັດທັງຫຼາຍຕ້ອງປະພຶດ

## ຂໍ້ວັດປະຕິບັດ ໙໔ ຂໍ້ຂອງພິກຂຸຜູ້ປະພຶດມານັດ

[໙໑] ພິກຂຸທັງຫຼາຍ ພິກຂຸຜູ້ປະພຶດມານັດເພິ່ງປະພຶດໂດຍຊອບ ການປະພຶດໂດຍຊອບໃນເລື້ອງນັ້ນດັ່ງນີ້ ພິກຂຸຜູ້ປະພຶດມານັດ

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນພິກຂຸນີ
໖. ບໍ່ເພິ່ງຕ້ອງອາບັດທີ່ເປັນເຫດໃຫ້ສົງໃຫ້ມານັດນັ້ນອີກ
໗. ບໍ່ເພິ່ງຕ້ອງອາບັດອື່ນທຳນອງດຽວກັນ
໘. ບໍ່ເພິ່ງຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໙. ບໍ່ເພິ່ງຕຳໜິກຳ
໑໐. ບໍ່ເພິ່ງຕຳໜິພິກຂຸຜູ້ເຮັດກຳ
໑໑. ບໍ່ເພິ່ງງົດອຸໂປສົດແກ່ປະກະຕັດຕະພິກຂຸ
໑໒. ບໍ່ເພິ່ງງົດປະວາຣະນາແກ່ປະກະຕັດຕະພິກຂຸ
໑໓. ບໍ່ເພິ່ງກະທຳການສອບສວນ

໑໔. ບໍ່ເພິ່ງເລີ່ມອະນຸວາທາທິກອນ
໑໕. ບໍ່ເພິ່ງຂໍໂອກາດພິກຂຸອື່ນ
໑໖. ບໍ່ເພິ່ງໂຈດພິກຂຸອື່ນ
໑໗. ບໍ່ເພິ່ງໃຫ້ພິກຂຸອື່ນໃຫ້ການ
໑໘. ບໍ່ເພິ່ງຊັກຊວນກັນກ່ຳຄວາມຜິດຖຽງ
໑໙. ບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ
໒໐. ບໍ່ເພິ່ງນັ່ງທາງໜ້າປະກະຕັດຕະພິກຂຸ
໒໑. ເພິ່ງພໍໃຈອາສະນະສຸດທ້າຍ ບ່ອນນອນສຸດທ້າຍ ວິຫານສຸດທ້າຍຂອງສົງທີ່ຈະໃຫ້ທ່ານ
໒໒. ບໍ່ເພິ່ງມີປະກະຕັດຕະພິກຂຸເປັນປຸເຣສະມະນະຫຼືເປັນປັດສາສະມະນະເຂົ້າຕະກູນ
໒໓. ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ
໒໔. ບໍ່ເພິ່ງສະມາທານປິນດະປາຕິກັງຄະທຸດົງ
໒໕. ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ຍ້ອນປັດໄຈນັ້ນດ້ວຍຄິດວ່າ "ຄົນຢ່າໄດ້ຮູ້ຈັກເຮົາ
໒໖. ເປັນອາຄັນຕຸກະໄປກໍເພິ່ງບອກໃຫ້ຮູ້
໒໗. ມີອາຄັນຕຸກະມາກໍເພິ່ງບອກໃຫ້ຮູ້
໒໘. ເພິ່ງບອກໃນມື້ອຸໂປສົດ
໒໙. ເພິ່ງບອກໃນມື້ປະວາຣະນາ
໓໐. ເພິ່ງບອກທຸກມື້
໓໑. ຖ້າອາພາດ ເພິ່ງສົ່ງທູດໃຫ້ໄປບອກ
໓໒. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງເວັ້ນແຕ່ມີອັນຕະລາຍ
໓໓. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ
໓໔. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງ ບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ
໓໕. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ฯລฯ
໓໖. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ฯລฯ

໓໗. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

໓໘. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດເຊິ່ງບໍ່ມີພິກຂຸ ຯລຯ

໓໙. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ຯລຯ

໔໐. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດເຊິ່ງມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດ ເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

໔໑. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດທີ່ມີພິກຂຸ ຯລຯ

໔໒. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໓. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

໔໔. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດມີພິກຂຸ ຯລຯ

໔໕. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸຯລຯ

໔໖. ບໍ່ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

໔໗. ບໍ່ເພິ່ງອອກຈາກອາວາດ ຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດ ມີພິກຂຸ ຯລຯ

໔໘. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໔໙. ບໍ່ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນນານາສັງວາດຢູ່ດ້ວຍ ເວັ້ນແຕ່ໄປກັບສົງ ເວັ້ນແຕ່ມີອັນຕະລາຍ

໕໐. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ

໕໑. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ

໕໒. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງ ໃນມື້ນັ້ນແລ

໕໓. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ
໕໔. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ
໕໕. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ
໕໖. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດທີ່ມີພິກຂຸ ຯລຯ
໕໗. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດມີພິກຂຸ ຯລຯ
໕໘. ເພິ່ງອອກຈາກອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ
໕໙. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບປະກະຕັດຕະພິກຂຸ
໖໐. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ
໖໑. ບໍ່ເພິ່ງຢູ່ໃນອາວາດຫຼືໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ
໖໒. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ
໖໓. ເພິ່ງນິມົນປະກະຕັດຕະພິກຂຸໃຫ້ນັ່ງ
໖໔. ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບປະກະຕັດຕະພິກຂຸ
໖໕. ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ
໖໖. ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ
໖໗. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບປະກະຕັດຕະພິກຂຸ
໖໘. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ
໖໙. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ
໗໐-໘໙. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຢູ່ປະຣິວາດ ຯລຯ ກັບພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ຯລຯ ກັບພິກຂຸຄວນແກ່ມານັດ ຯລຯ ກັບ ພິກຂຸຜູ້ປະພຶດມານັດທີ່ມີພັນສາແກ່ກວ່າ ຯລຯ ກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານ ຯລຯ ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວ ກັນ

ກັບພິກຂຸຜູ້ຄວນແກ່ອັບພານ ໗໖໗ ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບພິກຂຸຜູ້ຄວນແກ່ອັບພານ

໒໐. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ

໒໑. ເມື່ອພິກຂຸຜູ້ຄວນແກ່ອັບພານນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ

໒໒. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ຄວນແກ່ອັບພານ

໒໓. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ

໒໔. ເມື່ອພິກຂຸຜູ້ຄວນແກ່ອັບພານຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

ພິກຂຸທັງຫຼາຍ ຖ້າສົງມີພິກຂຸຜູ້ປະພຶດມານັດເປັນອົງທີ ໔ ເພິ່ງໃຫ້ປະຣິວາດດຶງເຂົ້າ ຫາອາບັດເດີມ ໃຫ້ມານັດ ສົງມີພິກຂຸຜູ້ປະພຶດມານັດນັ້ນເປັນອົງທີ ໔໐ ເພິ່ງອັບພານ ກຳນັ້ນບໍ່ຈັດເປັນກຳແລະບໍ່ຄວນເຮັດ

**ຂໍ້ວັດປະຕິບັດ ໒໔ ຂໍ້ຂອງພິກຂຸຜູ້ປະພຶດມານັດ ຈົບ**

## ຣັດຕິເສດ

## ວ່າດ້ວຍເຫດໃຫ້ຂາດຣາຕີ ໔ ຢ່າງ

[໒໔] ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ບັດແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ນັ່ງຢູ່ທີ່ສົມຄວນ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຣັດຕິເສດຂອງພິກຂຸຜູ້ປະພຶດມານັດມີທີ່ໃດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຣັດຕິເສດຂອງພິກຂຸຜູ້ປະພຶດມານັດມີ ໔ ຢ່າງ ຄື

໑. ສະຫະວາສະ (ການຢູ່ຮ່ວມກັນ)

໒. ວິບປະວາສະ (ການຢູ່ປາສະຈາກ)

໓. ອະນາໂຣຈະນາ (ການບໍ່ບອກ)

໔. ອູເນກະເນຈະຣະນະ (ການປະພຶດມານັດໃນຄະນະສົງອັນຂາດ)

ອຸບາລີ ຣັດຕິເສດຂອງພິກຂຸຜູ້ປະພຶດມານັດມີ ໔ ຢ່າງນີ້ແລ

## ຊົງອະນຸຍາດໃຫ້ເກັບມານັດ

[໙໓] ສະໄໝນັ້ນ ພິກຂຸສົງມາປະຊຸມກັນຈຳນວນຫຼາຍໃນນະຄອນສາວັດຖີ ພິກຂຸທັງຫຼາຍຜູ້ປະພຶດມານັດບໍ່ສາມາດຈະເຮັດມານັດໃຫ້ບໍລິສຸດໄດ້ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບມານັດ

## ວິທີເກັບມານັດ

ພິກຂຸທັງຫຼາຍ ພິກຂຸເພິ່ງເກັບມານັດແບບນີ້ ພິກຂຸຜູ້ປະພຶດມານັດເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວວ່າ "ຂ້າພະເຈົ້າເກັບມານັດ" ມານັດຍ່ອມເປັນອັນເກັບ ຫຼືກ່າວວ່າ "ຂ້າພະເຈົ້າເກັບຂໍ້ວັດປະຕິບັດ" ມານັດ ຍ່ອມເປັນອັນເກັບ

## ຊົງອະນຸຍາດໃຫ້ສະມາທານມານັດ

[໙໔] ສະໄໝນັ້ນ ພິກຂຸທັງຫຼາຍເດີນທາງອອກຈາກນະຄອນສາວັດຖີໄປໃນບ່ອນຕ່າງ ໆ ພິກຂຸ ທັງຫຼາຍຜູ້ປະພຶດມານັດບໍ່ສາມາດເຮັດມານັດໃຫ້ບໍລິສຸດໄດ້ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະ ພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສະມາທານມານັດ"

## ວິທີສະມາທານມານັດ

ພິກຂຸທັງຫຼາຍ ພິກຂຸເພິ່ງສະມາທານມານັດແບບນີ້ ພິກຂຸຜູ້ປະພຶດມານັດເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ນັ່ງຢ່ອງຢໍ້ ປະນົມມື ກ່າວວ່າ "ຂ້າພະເຈົ້າສະມາທານມານັດ" ມານັດຍ່ອມເປັນອັນສະມາທານຫຼືກ່າວວ່າ "ຂ້າພະເຈົ້າສະມາທານ ຂໍ້ວັດປະຕິບັດ" ມານັດຍ່ອມເປັນອັນສະມາທານ

**ມານັດຕະຈາຣິກະວັດຕະ ຈົບ**

# ໕. ອັບພານາຣະຫະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດຂອງພິກຂຸຜູ້ຄວນແກ່ອັບພານ

[໙໕] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ຄວນແກ່ອັບພານຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍ ຂາບໄຫວ້ລຸກຮັບ ໆລໆ ການຖູຫຼັງໃຫ້ໃນເວລາອາບນ້ຳ

ບັນດາພິກຂຸຜູ້ມັກໜ້ອຍສັນໂດດ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸຜູ້ຄວນແກ່ອັບພານຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງປະຊຸມສົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງ ຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸຜູ້ຄວນແກ່ອັບພານຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳ ແມ່ນບໍ?"

ພວກພິກຂຸຂາບທູນວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳແນວນັ້ນ ບໍ່ສົມຄວນ ຯລຯ ພິກຂຸທັງຫຼາຍ ເປັນຫຍັງພວກພິກຂຸຜູ້ຄວນແກ່ອັບພານຈິ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳນໍ ພິກຂຸທັງຫຼາຍ ການກະທຳແນວນີ້ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ ເມື່ອຊົງຕຳໜິແລ້ວ

ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ ອັບພານບໍ່ເພິ່ງຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳ ອົງໃດຍິນດີ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການຂາບໄຫວ້ ລຸກຮັບ ຯລຯ ການຖູຫຼັງໃຫ້ໃນເວລາອາບນ້ຳຂອງພິກຂຸຜູ້ຄວນແກ່ອັບພານນຳກັນຕາມລຳດັບພັນສາ

ພິກຂຸທັງຫຼາຍ ເຮົາອະນຸຍາດກິດ ໕ ຢ່າງ ຄື ອຸໂປສົດ ປະວາຣະນາ ຜ້າອາບນ້ຳຝົນ ການສະລະພັດ ພັດເພື່ອພິກຂຸຜູ້ຄວນແກ່ອັບພານນຳກັນຕາມລຳດັບພັນສາ

ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ເຮົາຈະບັນຍັດຂໍ້ວັດປະຕິບັດແກ່ພິກຂຸຜູ້ຄວນແກ່ອັບພານໂດຍວິທີທີ່ພິກຂຸຜູ້ຄວນແກ່ອັບພານທັງຫຼາຍຕ້ອງປະພຶດ

## ຂໍ້ວັດປະຕິບັດ ໘໙ ຂໍ້ຂອງພິກຂຸຜູ້ຄວນແກ່ອັບພານ

[໙໖] ພິກຂຸທັງຫຼາຍ ພິກຂຸຜູ້ຄວນແກ່ອັບພານເພິ່ງປະພຶດໂດຍຊອບ ການປະພຶດຊອບຕ້ອງໃນເລື້ອງນັ້ນດັ່ງນີ້ ພິກຂຸຜູ້ຄວນແກ່ອັບພານ

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໒. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ

ຯລຯ (ເພິ່ງອະທິບາຍຂໍ້ວັດປະຕິບັດຂອງພິກຂຸຜູ້ຄວນແກ່ມານັດ ຜູ້ປະພຶດມານັດ ແລະຜູ້ຄວນແກ່ອັບພານ ທັງ ๓ ໃຫ້ເປັນອັນດຽວກັນ ຄືຂໍ້ວັດປະຕິບັດຂອງພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ສັນນັ້ນ)

໑໘. ບໍ່ເພິ່ງຊັກຊວນກັນກ່ຳຄວາມຜິດຖຽງ

໑໙. ບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ

໒໐. ບໍ່ເພິ່ງນັ່ງທາງໜ້າປະກະຕັດຕະພິກຂຸ

໒໑. ເພິ່ງພໍໃຈອາສະນະສຸດທ້າຍ ບ່ອນນອນສຸດທ້າຍ ວິຫານສຸດທ້າຍຂອງສິ່ງທີ່ຈະໃຫ້ທ່ານ

໒໒. ບໍ່ເພິ່ງມີປະກະຕັດຕະພິກຂຸເປັນປຸເຣສະມະນະ ຫຼືເປັນປັດສາສະມະນະເຂົ້າຕະກູນ

໒໓. ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ

໒໔. ບໍ່ເພິ່ງສະມາທານປິນດະປາຕິກັງຄະທຸດົງ

໒໕. ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ຍ້ອນປັດໄຈນັ້ນດ້ວຍຄິດວ່າ "ຄົນຢ່າໄດ້ຮູ້ຈັກເຮົາ

໒໖. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

໒໗. ບໍ່ເພິ່ງອອກຈາກອາວາດທີ່ມີພິກຂຸໄປສູ່ສະຖານທີ່ບໍ່ແມ່ນອາວາດເຊິ່ງບໍ່ມີພິກຂຸ ເວັ້ນແຕ່ໄປກັບປະກະຕັດຕະພິກຂຸ ເວັ້ນແຕ່ມີອັນຕະລາຍ

ຯລຯ (ເພິ່ງອະທິບາຍໃຫ້ພິດສະດານຄືທີ່ຜ່ານມາ)

໒໔. ເພິ່ງອອກຈາກອາວາດທີ່ມີພິກຂຸ ຯລຯ

໒໕. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ຯລຯ

໒໖. ເພິ່ງອອກຈາກອາວາດຫຼືສະຖານທີ່ມີແມ່ນອາວາດທີ່ມີພິກຂຸ ໄປສູ່ອາວາດ ຯລຯ

໓໗. ເພິ່ງອອກຈາກອາວາດທີ່ມີພິກຂຸ ໄປສູ່ສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ ຯລຯ

໓໘. ເພິ່ງອອກຈາກສະຖານທີ່ບໍ່ແມ່ນອາວາດມີພິກຂຸ ໄປສູ່ອາວາດຫຼືສະຖານທີ່ບໍ່ແມ່ນອາວາດມີພິກຂຸເຊິ່ງມີພິກຂຸເປັນສະມານະສັງວາດຢູ່ດ້ວຍ ຖ້າຮູ້ວ່າ "ເຮົາສາມາດໄປເຖິງໃນມື້ນັ້ນແລ ຯລຯ

໕໓. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບປະກະຕັດຕະພິກຂຸ

໕໔. ບໍ່ເພິ່ງຢູ່ໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໕. ບໍ່ເພິ່ງຢູ່ໃນອາວາດຫຼືໃນສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນ

໕໖. ເຫັນປະກະຕັດຕະພິກຂຸແລ້ວເພິ່ງລຸກຈາກອາສະນະ

໕໗. ເພິ່ງນິມົນປະກະຕັດຕະພິກຂຸໃຫ້ນັ່ງ

໕໗. ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບປະກະຕັດຕະພິກຂຸ
໕໙. ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ
໖໐. ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ
໖໑. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບປະກະຕັດຕະພິກຂຸ
໖໔. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ
໖໓. ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ
໖໔-໗໔. ບໍ່ເພິ່ງຢູ່ໃນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຢູ່ປະຣິວາດ ໗ລ໗ ກັບ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ໗ລ໗ ກັບພິກຂຸຜູ້ຄວນແກ່ມານັດ ໗ລ໗ ກັບພິກຂຸຜູ້ປະພຶດມານັດ ໗ລ໗ ກັບພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າ ໗ລ໗ ບໍ່ເພິ່ງຢູ່ໃນສະຖານທີ່ທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າ ໗ລ໗ ບໍ່ເພິ່ງຢູ່ໃນອາວາດຫຼືສະຖານທີ່ບໍ່ແມ່ນອາວາດທີ່ມຸງບັງດຽວກັນກັບພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າ ໗ລ໗ ບໍ່ເພິ່ງນັ່ງເທິງອາສະນະດຽວກັນກັບພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າ
໗໕. ເມື່ອພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່ານັ່ງເທິງອາສະນະຕ່ຳ ບໍ່ເພິ່ງນັ່ງເທິງອາສະນະສູງ
໗໖. ເມື່ອພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່ານັ່ງເທິງພື້ນດິນ ບໍ່ເພິ່ງນັ່ງເທິງອາສະນະ
໗໗. ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມດຽວກັນກັບພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າ
໗໘. ເມື່ອພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າຍ່າງຈົງກົມຢູ່ໃນທີ່ຈົງກົມຕ່ຳ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມສູງ
໗໙. ເມື່ອພິກຂຸຜູ້ຄວນແກ່ອັບພານທີ່ມີພັນສາແກ່ກວ່າຍ່າງຈົງກົມຢູ່ທີ່ພື້ນດິນ ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ

ພິກຂຸທັງຫຼາຍ ຖ້າສົງມີພິກຂຸຜູ້ຄວນແກ່ອັບພານເປັນອົງທີ ໔ ເພິ່ງໃຫ້ປະຣິວາດດຶງເຂົ້າຫາອາບັດເດີມ ໃຫ້ມານັດ ສົງມີພິກຂຸຜູ້ຄວນແກ່ອັບພານນັ້ນເປັນອົງທີ ໔໐ ເພິ່ງອັບພານກຳ ນັ້ນບໍ່ຈັດເປັນກຳ ແລະບໍ່ຄວນເຮັດ

**ຂໍ້ວັດປະຕິບັດ ໗໙ ຂໍ້ຂອງພິກຂຸຜູ້ຄວນແກ່ອັບພານ ຈົບ**

**ອັບພານາຣະຫະວັດຕະ ຈົບ**

**ປາຣິວາສິກະຂັນທະກະ ທີ ໔ ຈົບ**

# ໃນຂັນທະກະນີ້ມີ ໕ ເລື້ອງ

## ລວມເລື້ອງທີ່ມີໃນປາຣິວາສິກະຂັນທະກະ

ເລື້ອງພວກພິກຂຸຜູ້ຢູ່ປະຣິວາດຍິນດີການທີ່ປະກະຕັດຕະພິກຂຸທັງຫຼາຍ
ຂາບໄຫວ້ ລຸກຮັບ ປະນົມມື ເຮັດສາມີຈິກຳ ນຳອາສະນະມາໃຫ້
ນຳບ່ອນນອນມາໃຫ້ ການລ້າງຕີນ ຕັ້ງຕັ່ງເກີບ ຕັ້ງກະເບື້ອງເຊັດຕີນ
ຮັບບາດແລະຈີວອນ ຖູຫຼັງໃຫ້ໃນເວລາອາບນ້ຳ
ປະກະຕັດຕະພິກຂຸຜູ້ມີສິນເປັນທີ່ຮັກກ່າວຕຳໜິ

ພິກຂຸຢູ່ປະຣິວາດຜູ້ຍິນດີຕ້ອງທຸກກົດ ຊົງອະນຸຍາດແກ່ພິກຂຸຜູ້ຢູ່ປະຣິວາດ
ນຳກັນຕາມລຳດັບພັນສາ ແລະຊົງອະນຸຍາດກິດ ໕ ຢ່າງ
ຄື ອຸໂປສົດ ປະວາຣະນາ ຜ້າອາບນ້ຳຝົນ ການສະລະແລະພັດ
ວິທີປະພຶດຊອບ ຄື ພິກຂຸຜູ້ຢູ່ປະຣິວາດບໍ່ເພິ່ງຍ່າງນຳໜ້າປະກະຕັດຕະພິກຂຸ
ພໍໃຈບ່ອນສຸດທ້າຍ ບໍ່ເພິ່ງໃຫ້ພິກຂຸນຳໜ້າແລະຕາມເຂົ້າຕະກູນ
ບໍ່ເພິ່ງສະມາທານອາຣັນຍິກັງຄະທຸດົງ ປິນດະປາຕິກັງຄະທຸດົງ
ບໍ່ເພິ່ງໃຫ້ເຂົານຳບິນທະບາດມາສົ່ງ ເປັນອາຄັນຕຸກະໄປ
ແລະມີອາຄັນຕຸກະມາບອກໃນມື້ອຸໂປສົດ
ໃນມື້ປະວາຣະນາ ສັ່ງທູດໃຫ້ບອກ
ໄປສູ່ອາວາດແລະສະຖານທີ່ບໍ່ແມ່ນອາວາດທີ່ມີພິກຂຸ

ບໍ່ຢູ່ໃນບ່ອນມຸງບັງດຽວກັນ ເມື່ອປະກະຕັດຕະພິກຂຸນັ່ງເທິງພື້ນດິນ
ບໍ່ເພິ່ງນັ່ງເທິງອາສະນະ ເມື່ອປະກະຕັດຕະພິກຂຸນັ່ງເທິງອາສະນະຕ່ຳ
ບໍ່ເພິ່ງນັ່ງເທິງອາສະນະສູງ ເມື່ອປະກະຕັດຕະພິກຂຸຍ່າງຈົງກົມຢູ່ໃນບ່ອນຕ່ຳ
ບໍ່ເພິ່ງຍ່າງຈົງກົມໃນບ່ອນສູງ ຫຼືຍ່າງຈົງກົມເທິງພື້ນດິນ
ບໍ່ເພິ່ງຍ່າງຈົງກົມໃນບ່ອນຈົງກົມ
ບໍ່ເພິ່ງຢູ່ໃນບ່ອນມຸງບັງດຽວກັບພິກຂຸຜູ້ຢູ່ປະຣິວາດທີ່ມີພັນສາຫຼາຍກວ່າ
ກະທຳການໃຊ້ບໍ່ໄດ້ ຣາຕີຂາດ ເຮັດປະຣິວາດໃຫ້ບໍລິສຸດ
ພິກຂຸຜູ້ຢູ່ປະຣິວາດເພິ່ງຮູ້ວິທີເກັບຂໍ້ວັດປະຕິບັດ
ວິທີສະມາທານຂໍ້ວັດປະຕິບັດ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ
ຜູ້ຄວນແກ່ມານັດ ຜູ້ປະພຶດມານັດແລະຜູ້ຄວນແກ່ອັບພານ
ພຣະວິໄນທຳເພິ່ງຮູ້ໂດຍໄນທີ່ຄ້າຍກັນ

ຣັດຕິເສດ ຂອງພິກຂຸຜູ້ຢູ່ປະຣິວາດມີ ໓ ຢ່າງ ຂອງພິກຂຸຜູ້ປະພຶດມານັດມີ ໔ ຢ່າງ ການປະພຶດໃຫ້ຄົບກຳນົດນີ້ ກຳ ໔ ຢ່າງຄ້າຍກັນ ກຳ ໓ ຢ່າງນອກນັ້ນຄືກັນ

**ປາຣິວາສິກະຂັນທະກະ ຈົບ**

# ៣. ສະມຸດຈະຍະຂັນທະກະ

## ໑. ສຸກກະວິສັດຖິ

## ວ່າດ້ວຍວິທີການອອກຈາກອາບັດທີ່ຕ້ອງຍ້ອນເຮັດນ້ຳອະສຸຈິໃຫ້ເຄື່ອນ

### ເລື້ອງພຣະອຸທາຍີ

[໙໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນທ່ານພຣະອຸທາຍີຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ[१] ບໍ່ໄດ້ປິດໄວ້ ແລ້ວບອກພິກຂຸທັງຫຼາຍວ່າ "ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ ຂ້ານ້ອຍຈະປະຕິບັດແນວໃດ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ມານັດ ៦ ຣາຕີ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ມານັດແນວນີ້

### ອັບປະຕິດສັນນະມານັດຕະ

### ວ່າດ້ວຍມານັດເພື່ອອາບັດທີ່ບໍ່ໄດ້ປິດໄວ້ແລະກຳມະວາຈາ

[໙໘] ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນຂໍມານັດ[६] ៦ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ກັບສົງ

ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ ແມ່ນເທື່ອທີ ໒ ຂ້ານ້ອຍນັ້ນຂໍມານັດ ៦ ຣາຕີເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ກັບສົງ ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ບໍ່ໄດ້ປິດໄວ້ ແມ່ນເທື່ອທີ ៣ ຂ້ານ້ອຍນັ້ນຂໍມານັດ ៦ ຣາຕີ ເພື່ອອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖີບໍ່ໄດ້ປິດໄວ້ກັບສົງ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໖໙]  ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ກັບສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບ ການໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ

ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ສົງໃຫ້ແລ້ວແກ່ພິກຂຸອຸທາຍີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ອັບປະຕິດສັນນະອັບພານ

## ວ່າດ້ວຍອັບພານສຳລັບອາບັດທີ່ບໍ່ໄດ້ປົດໄວ້

[໑໐໐] ທ່ານພຣະອຸທາຍີນັ້ນປະພຶດມານັດແລ້ວໄດ້ບອກພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ຂ້ານ້ອຍນັ້ນ ຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ແກ່ຂ້ານ້ອຍ ຂ້ານ້ອຍນັ້ນ ປະພຶດມານັດແລ້ວຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງອັບພານພິກຂຸອຸທາຍີ

## ວິທີອັບພານແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງອັບພານແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ຂ້ານ້ອຍນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນ ປະພຶດມານັດແລ້ວຈຶ່ງຂໍອັບພານກັບສົງ

ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ຂ້ານ້ອຍນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນປະພຶດມານັດແລ້ວຈຶ່ງຂໍອັບພານກັບສົງ ແມ່ນເທື່ອທີ ໒

ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ຂ້ານ້ອຍນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນປະພຶດມານັດແລ້ວຈຶ່ງຂໍອັບພານກັບສົງ ແມ່ນເທື່ອທີ ໓

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໐໑] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ພິກຂຸອຸທາຍິນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ພິກຂຸອຸທາຍິ ພິກຂຸອຸທາຍິນັ້ນໄດ້ ປະພຶດມານັດແລ້ວຂໍອັບພານກັບສົງ ຖ້າສົງພ້ອມກັນແລ້ວເພິ່ງອັບພານພິກຂຸອຸທາຍິ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ພິກຂຸອຸທາຍິນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ພິກຂຸອຸທາຍິ ພິກຂຸອຸທາຍິນັ້ນປະພຶດມານັດແລ້ວຂໍອັບພານກັບສົງ ສົງອັບພານພິກຂຸອຸທາຍິ ທ່ານອົງໃດເຫັນດ້ວຍກັບການອັບພານພິກຂຸອຸທາຍິ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ພິກຂຸອຸທາຍິນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ແກ່ພິກຂຸອຸທາຍິ ພິກຂຸອຸທາຍິນັ້ນປະພຶດມານັດແລ້ວຂໍອັບພານກັບສົງ ສົງອັບພານ ພິກຂຸອຸທາຍິ ທ່ານອົງໃດເຫັນດ້ວຍກັບການອັບພານພິກຂຸອຸທາຍິ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ ພິກຂຸອຸທາຍິນັ້ນຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປົດໄວ້ແກ່ພິກຂຸອຸທາຍິ ພິກຂຸອຸທາຍິນັ້ນປະພຶດມານັດແລ້ວຂໍອັບພານກັບສົງ ສົງອັບພານພິກຂຸອຸທາຍິ ທ່ານອົງໃດເຫັນດ້ວຍກັບການອັບພານພິກຂຸອຸທາຍິ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸອຸທາຍິ ສົງອັບພານແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ເອກາທະປະຕິດສັນນະປະຣິວາດ

## ວ່າດ້ວຍປະຣິວາດສຳລັບອາບັດທີ່ປິດໄວ້ມື້ດຽວ

[໑໐໔] ສະໄໝນັ້ນ ທ່ານພຣະອຸທາຍີຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແລ້ວບອກພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ

## ວິທີໃຫ້ປະຣິວາດ ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນຂໍປະຣິວາດມື້ດຽວເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໐໕] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ພິກຂຸອຸທາຍີນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ປະຣິວາດມື້ດຽວເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວນັ້ນແກ່ພິກຂຸອຸທາຍີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ພິກຂຸອຸທາຍີນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີແລ້ວ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້

ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໘ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯลฯ

ແມ່ນເທື່ອທີ ๑ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ທ່ານຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ສົງໃຫ້ແລ້ວແກ່ພິກຂຸອຸທາຍີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງ ນັ້ນເປັນມະຕິແນວນີ້

## ເອກາຫປະຕິດສັນນະມານັດຕະ

## ວ່າດ້ວຍມານັດສຳລັບອາບັດທີ່ປິດໄວ້ມື້ດຽວ

[໑໐໘] ພິກຂຸອຸທາຍີນັ້ນຢູ່ປະຣິວາດແລ້ວບອກແກ່ພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ຂ້ານ້ອຍນັ້ນຈຶ່ງຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ແກ່ຂ້ານ້ອຍ ຂ້ານ້ອຍນັ້ນຢູ່ປະຣິວາດແລ້ວຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນສົງຈົ່ງໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ

## ວິທີໃຫ້ມານັດ ໖ ຣາຕີ ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ມານັດແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ຂ້ານ້ອຍນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ

ກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ ດຽວແກ່ຂ້ານ້ອຍ ຂ້ານ້ອຍນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະ ນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໐໘] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ ສັນ ເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ພິກຂຸອຸທາຍິນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍິ ພິກຂຸອຸທາຍິນັ້ນ ຢູ່ປະຣິວາດແລ້ວຂໍ ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ຖ້າສົງ ພ້ອມແລ້ວເພິ່ງໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ ດຽວແກ່ພິກຂຸອຸທາຍິ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາ ສຸກກະວິສັດຖິ ປິດໄວ້ມື້ດຽວ ພິກຂຸອຸທາຍິນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິ ກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະ ນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍິແລ້ວ ພິກຂຸອຸທາຍິນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍິແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດ ຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍິ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງ ທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸ ທາຍິນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ພິກຂຸອຸທາຍິນັ້ນຂໍປະຣິວາ ດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິ ວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍິແລ້ວ ພິກຂຸອຸທາຍິນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິ ສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະ

ວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ທ່ານອົງນັ້ນ ເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ມານັດ ໖ ຣາຕີເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວສົງໃຫ້ແລ້ວ ແກ່ພິກຂຸອຸທາຍີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນ ມະຕິ ແນວນີ້

## ເອກາຫະປະຕິດສັນນະອັບພານ

## ວ່າດ້ວຍອັບພານສຳລັບອາບັດປິດໄວ້ມື້ດຽວ

[໑໐໖] ພິກຂຸອຸທາຍີນັ້ນປະພຶດມານັດແລ້ວບອກພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ຂ້ານ້ອຍນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ຂ້ານ້ອຍ ຂ້ານ້ອຍນັ້ນຢູ່ປະຣິ ວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບ ສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ແກ່ຂ້ານ້ອຍ ຂ້ານ້ອຍນັ້ນປະພຶດມານັດແລ້ວຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງອັບພານພິກຂຸ ອຸທາຍີ

## ວິທີອັບພານແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງອັບພານແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະ ຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ຂ້ານ້ອຍນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວ ກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ ດຽວແກ່ຂ້ານ້ອຍ ຂ້ານ້ອຍນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະ ນິກາສຸກກະວິສັດຖິ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນ ເຈຕະນິກາສຸກກະວິສັດຖິ ປິດໄວ້ມື້ດຽວແກ່ຂ້ານ້ອຍ ຂ້ານ້ອຍນັ້ນປະພຶດມານັດແລ້ວຂໍອັບພານ ກັບສົງ

ເພິ່ງຂໍແມ່ນເທື່ອທີ ໔ ຯລຯ
ເພິ່ງຂໍແມ່ນເທື່ອທີ ໓ ຯລຯ
ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກໍາມະວາຈາວ່າ

[໑໐໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ພິກຂຸອຸທາຍີນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ

ສົງໄດ້ໃຫ້ປະຣິວາດມື້ດຽວເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນ ປະພຶດມານັດແລ້ວຂໍອັບພານກັບສົງ ຖ້າສົງພ້ອມກັນແລ້ວເພິ່ງອັບພານພິກຂຸອຸທາຍີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ພິກຂຸອຸທາຍີນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນຢູ່ປະຣິວາດ ແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນປະພຶດມານັດແລ້ວຂໍອັບພານກັບສົງ ສົງອັບພານພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການອັບພານພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໔ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ
ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ພິກຂຸອຸທາຍີນັ້ນຂໍປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ປະຣິວາດມື້ດຽວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວ ແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນຢູ່ປະຣິວາດແລ້ວຂໍມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວກັບສົງ ສົງໄດ້ໃຫ້ມານັດ ໖ ຣາຕີ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ມື້ດຽວແກ່ພິກຂຸອຸທາຍີ ພິກຂຸອຸທາຍີນັ້ນປະພຶດມານັດແລ້ວຂໍອັບພານກັບສົງ ສົງອັ

ບພານພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການອັບພານພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ພິກຂຸອຸທາຍີ ສົງອັບພານແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ປັນຈາຫະປະຕິດສັນນະປະຣິວາດ

## ວ່າດ້ວຍປະຣິວາດສຳລັບອາບັດປິດໄວ້ ໕ ມື້

[໑໐໗] ສະໄໝນັ້ນ ທ່ານພຣະອຸທາຍີຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໔ ມື້ ຯລຯ ປິດໄວ້ ໓ ມື້ ຯລຯ ປິດໄວ້ ໔ ມື້ ຯລຯ ປິດໄວ້ ໕ ມື້ ແລ້ວບອກແກ່ພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີ

## ວິທີໃຫ້ປະຣິວາດແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມື ກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍນັ້ນຂໍປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໐໘] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນ

ເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໘ ຂ້າພະເຈົ້າກ່າວຄວາມນີ້ວ່າ ໆລໆ

ແມ່ນເທື່ອທີ ໙ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີ ນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ແກ່ພິກຂຸອຸທາຍີແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດ ບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ສົງໃຫ້ແລ້ວແກ່ພິກຂຸອຸທາຍີ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນ ເປັນມະຕິແນວນີ້

## ປາຣິວາສິກມູລາຍປະຕິກັດສະນາ

## ວ່າດ້ວຍການດຶງພິກຂຸຜູ້ຢູ່ປະຣິວາດເຂົ້າຫາອາບັດເດີມ

[໑໑໐] ທ່ານພຣະອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງບໍ່ໄດ້ປິດໄວ້ ບອກແກ່ພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງບໍ່ໄດ້ປິດໄວ້ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີໃນລະຫວ່າງບໍ່ໄດ້ປິດໄວ້

## ວິທີດຶງເຂົ້າຫາອາບັດເດີມແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງດຶງເຂົ້າຫາອາບັດເດີມແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ ຂ້ານ້ອຍນັ້ນຂໍປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີໃນລະຫວ່າງບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໑໑] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ຖ້າສົງພ້ອມກັນແລ້ວເພິ່ງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ໃນລະຫວ່າງ ບໍ່ໄດ້ປິດໄວ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖີໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງ

ເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ກັບສົງ ສົງຈຶ່ງດຶງພິກຂຸອຸທາຍີເຂົ້າຫາອາ ບັດເດີມເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະ ວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ທ່ານອົງໃດເຫັນດ້ວຍກັບການດຶງພິກຂຸອຸທາຍີເຂົ້າຫາອາບັດ ເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ທ່ານອົງນັ້ນ ເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໔ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ၵ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸ ທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາ ດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້

ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດ ໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະ ນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງຈຶ່ງດຶງ ພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ ໄດ້ປິດໄວ້ ທ່ານອົງໃດເຫັນດ້ວຍກັບການດຶງພິກຂຸອຸທາຍີເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນ ດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸອຸທາຍີ ສົງດຶງເຂົ້າຫາອາບັດເດີມແລ້ວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິ ສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖື ຄວາມນິ່ງ ນັ້ນເປັນມະຕິແນວນີ້

## ມານັດຕາຣະຫະມູລາຍະປະຕິກັດສະນາ

## ວ່າດ້ວຍການດຶງພິກຂຸຜູ້ຄວນແກ່ມານັດເຂົ້າຫາອາບັດເດີມ

[໑໑໔] ທ່ານພຣະອຸທາຍີນັ້ນຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດຕ້ອງອາບັດ ໑ ໂຕ ຊື່ ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ບອກແກ່ພິກຂຸທັງຫຼາຍວ່າ “ທ່ານ ທັງຫຼາຍ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍ ນັ້ນ ຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ

ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຈຶ່ງຂໍການດຶງເຂົ້າຫາອາ ບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍ ນັ້ນຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍຈະປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້

## ວິທີດຶງເຂົ້າຫາອາບັດເດີມແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງດຶງເຂົ້າຫາອາບັດເດີມແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ຂ້ານ້ອຍ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຢູ່ປະຣິວາດແລ້ວ ເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຂໍການດຶງເຂົ້າຫາອາ ບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໑໓] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີ

ນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕໃນລະຫວ່າງຊື່ສັນເຈຕະນິກາສຸກກະວິສັດຖິ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ຖ້າສົງພ້ອມກັນແລ້ວເພິ່ງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸທາຍີນີ້ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ພິກຂຸອຸທາຍີນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ພິກຂຸອຸທາຍີແລ້ວ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕ ຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ທ່ານອົງໃດເຫັນດ້ວຍກັບການດຶງພິກຂຸອຸທາຍີເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ພິກຂຸອຸທາຍີ ສົງດຶງເຂົ້າຫາອາບັດເດີມແລ້ວ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ຕິກາປັດຕິມານັດຕະ
## ວ່າດ້ວຍມານັດເພື່ອອາບັດ ໓ ໂຕ

[໑໑໔] ທ່ານພຣະອຸທາຍີນັ້ນຢູ່ປະຣິວາດແລ້ວບອກແກ່ພິກຂຸທັງຫຼາຍວ່າ “ທ່ານທັງຫຼາຍ

ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍ ນັ້ນຂໍປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ແກ່ຂ້ານ້ອຍແລ້ວ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດ ເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນ ຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດ ເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນ ຢູ່ປະຣິວາດແລ້ວຈະເພິ່ງປະຕິບັດແນວໃດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ມານັດ ໒ ຣາຕີເພື່ອອາບັດ ໓ ໂຕແກ່ພິກຂຸອຸທາຍີ

## ວິທີໃຫ້ມານັດເພື່ອອາບັດ ໓ ໂຕ ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ມານັດແນວນີ້ ຄື ພິກຂຸອຸທາຍີນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ ຂ້ານ້ອຍນັ້ນຂໍປະຣິ ວາດ ໕ ມື້ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ກັບສົງ ສົງໄດ້ໃຫ້ປະຣິວາດ ໕ ມື້ ເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ປິດໄວ້ ໕ ມື້ແກ່ຂ້ານ້ອຍແລ້ວ ຂ້ານ້ອຍນັ້ນກຳລັງຢູ່ປະຣິວາດຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນ ຈຶ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຢູ່ປະຣິວາດແລ້ວເປັນຜູ້ຄວນແກ່ມານັດ ຕ້ອງອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ປິດໄວ້ ຂ້ານ້ອຍນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດ ໑ ໂຕຊື່ສັນເຈຕະນິກາສຸກກະວິສັດຖິ ໃນລະຫວ່າງ ບໍ່ໄດ້ ປິດໄວ້ກັບສົງ ສົງດຶງຂ້ານ້ອຍນັ້ນເຂົ້າຫາອາບັດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງໃຫ້ປະຣິວາດ ໔ ເດືອນເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ"

## ວິທີໃຫ້ປະຣິວາດ ໔ ເດືອນ ແລະກຳວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ແນວນີ້ ຄື ພິກຂຸນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຯລຯ ກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດ໔ ຕົວປິດໄວ້ ໔ ເດືອນ ຂ້າພະເຈົ້ານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນ ກັບສົງ" ຂ້າພະເຈົ້ານັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນແກ່ຂ້າພະເຈົ້າແລ້ວເມືອຂ້າພະເຈົ້ານັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເຮົານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ" ດັ່ງນີ້ ຂ້າພະເຈົ້ານັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນແກ່ຂ້າພະເຈົ້າ ເມືອຂ້າພະເຈົ້ານັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ ທ່ານຜູ້ຈະເລີນ ຂ້າພະເຈົ້ານັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ"

ເພິ່ງຂໍແມ່ນ ເທື່ອທີ່ ໒ ຯລຯ

ເພິ່ງຂໍແມ່ນ ເທື່ອທີ່ ໓ ຯລຯ

ພິກຂຸຜູ້ສະຫຼາດ ສາມາດ ເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິຈະຕຸດຖະກຳວາຈາ ວ່າ

[໑໙໙] "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ພິກຂຸນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວເມືອພິກຂຸຊື່

ນີ້ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮົານັ້ນໄດ້ຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ" ດັ່ງນີ້ ເຮົານັ້ນຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນແກ່ເຮົານັ້ນ ເມືອເຮົານັ້ນ ກຳລັງຢູ່ປະຣິວາດຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ປິດໄວ້ ໔ ເດືອນກັບສົງ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ ອົງນີ້ ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ພິກຂຸນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມືອພິກຂຸນັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮົານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນກັບສົງ" ເຮົານັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວປິດໄວ້ ໔ ເດືອນແກ່ເຮົານັ້ນ ເມືອເຮົານັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນເພື່ອອາບັດແມ່ນນອກນີ້ປິດ ໄວ້ ໔ ເດືອນກັບສົງ" ດັ່ງນີ້ ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ປິດໄວ້ ໔ ເດືອນແກ່ພິກຂຸຊື່ນີ້ ທ່ານອົງໃດ ເຫັນດ້ວຍກັບການໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ປິດໄວ້ ໔ ເດືອນແກ່ພິກຂຸຊື່ນີ້ ທ່ານອົງນັ້ນ ເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນ ເພິ່ງທັກທ້ວງ

ແມ່ນເທື່ອທີ່ ໔ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ
ແມ່ນເທື່ອທີ່ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນ ສົງໃຫ້ແລ້ວແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ເພາະແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້"

ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

## ເທວະມາສາປະຣິວະສິຕັບພະວິທີ
## ວິທີຢູ່ປະຣິວາດ ໔ ເດືອນເພື່ອອາບັດປິດໄວ້ ໔ ເດືອນ

[໑໔໐] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ພິກຂຸນັ້ນ ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກໍາລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນ ໄດ້ຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໑ ຕົວ ປິດໄວ້ ໔ ເດືອນແກ່ເຮົາ ເມື່ອເຮົານັ້ນ ກໍາລັງຢູ່ປະຣິວາດ ຄິດລະອາຍໃຈວ່າ" ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ປິດໄວ້ ໔ ເດືອນກັບສົງ"

ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ

ພິກຂຸທັງຫຼາຍ ພິກຂຸນັ້ນ ເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

[໑໔໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວຮູ້ ອາບັດ ໑ ຕົວ ບໍ່ຮູ້ ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດຕົວທີ່ພິກຂຸນັ້ນຮູ້ ປິດໄວ້ ໔ ເດືອນ ກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດນັ້ນທີ່ປິດໄວ້ ໔ ເດືອນ ແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກໍາລັງຢູ່ປະຣິວາດ ຮູ້ອາບັດແມ່ນນອກນີ້ ພິກຂຸນັ້ນມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄືອາບັດ ໑ ຕົວຮູ້ ອາບັດ ໑ ຕົວບໍ່ຮູ້ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດຕົວທີ່ຮູ້ເຊິ່ງປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດນັ້ນທີ່ປິດໄວ້ ໔ ເດືອນແກ່ເຮົາເຮົານັ້ນ ກໍາລັງຢູ່ປະຣິວາດ ຮູ້ອາບັດແມ່ນນອກນີ້ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ

ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງທຽບຄຽງອາບັດນັ້ນ ແລ້ວຢູ່ປະຣິວາດ ໔ ເດືອນ

[໑໔໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວຣະລຶກໄດ້ ອາບັດ ໑ ຕົວຣະລຶກບໍ່ໄດ້ ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດຕົວທີ່ຣະລຶກໄດ້ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດນັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກໍາລັງຢູ່ປະຣິວາດ ຣະລຶກອາບັດແມ່ນນອກນີ້ໄດ້ ພິກຂຸນັ້ນມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວຣະລຶກໄດ້ ອາບັດ ໑ ຕົວຣະລຶກບໍ່ໄດ້ ເຮົານັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດທີ່ຣະລຶກໄດ້ ປິດໄວ້ ໔ ເດືອນກັບສົງສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດນັ້ນປິດໄວ້ ໔ ເດືອນແກ່ເຮົາ ເມື່ອເຮົານັ້ນກໍາລັງຢູ່ປະຣິວາດ ຣະລຶກອາບັດແມ່ນນອກນີ້ໄດ້ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນຈຶ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ ພິກຂຸທັງຫຼາຍ ພິກຂຸນັ້ນ ເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

[໑໔໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວແນ່ໃຈ ອາບັດ ໑ ຕົວບໍ່ແນ່ໃຈ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດຕົວທີ່ແນ່ໃຈປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດນັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກໍາລັງຢູ່ປະຣິວາດແນ່ໃຈໃນອາບັດແມ່ນນອກນີ້ ພິກຂຸນັ້ນ ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວແນ່ໃຈ ອາບັດ ໑ ຕົວບໍ່ແນ່ໃຈ ເຮົານັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດຕົວທີ່ແນ່ໃຈປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດນັ້ນທີ່ປິດໄວ້ ໔ ເດືອນແກ່ເຮົາ ເມື່ອເຮົານັ້ນກໍາລັງຢູ່ປະຣິວາດ ແນ່ໃຈໃນອາບັດແມ່ນນອກນີ້ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດແມ່ນນອກນີ້ທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ

ພິກຂຸທັງຫຼາຍ ພິກຂຸນັ້ນເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

## ພິກຂຸຜູ້ຄວນແກ່ມານັດ

[໑໔໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວຮູ້ແຕ່ປິດໄວ້ ອາບັດ ໑ ຕົວປິດໄວ້ໂດຍບໍ່ຮູ້ ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດ

ເຫຼົ່ານັ້ນ ທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ພິກຂຸອົງອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ມາເຖິງ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວຮູ້ແຕ່ປິດໄວ້ ອາບັດ ໑ ຕົວປິດໄວ້ໂດຍບໍ່ຮູ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດ ເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນກ່າວແນວນີ້ວ່າ"ທ່ານທັງຫຼາຍ ການໃຫ້ປະຣິວາດເພື່ອອາບັດທີ່ຮູ້ແຕ່ປິດໄວ້ ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດເພື່ອອາບັດທີ່ບໍ່ຮູ້ປິດໄວ້ ບໍ່ຊອບທຳ ຄວາມບໍ່ຊອບທຳຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເພື່ອອາບັດ ໑ ຕົວ"

[໑໔໕] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວ ຣະລຶກໄດ້ແຕ່ປິດໄວ້ ອາບັດ ໑ ຕົວປິດໄວ້ໂດຍຣະລຶກບໍ່ໄດ້ພິກຂຸນັ້ນຂໍປະຣິວາດ ໔ ເດືອນກັບສົງ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ພິກຂຸອົງອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງໃຝ່ການສຶກສາ ມາເຖິງ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວ ຣະລຶກໄດ້ແຕ່ປິດໄວ້ ອາບັດ ໑ຕົວປິດໄວ້ໂດຍຣະລຶກບໍ່ໄດ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ການໃຫ້ປະຣິວາດເພື່ອອາບັດທີ່ຣະລຶກໄດ້ແຕ່ປິດໄວ້ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດເພື່ອອາບັດທີ່ຣະລຶກບໍ່ໄດ້ປິດໄວ້ບໍ່ຊອບທຳ ຄວາມບໍ່ຊອບທຳຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເພື່ອອາບັດ ໑ ຕົວ"

[໑໔໖] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວແນ່ໃຈແຕ່ປິດໄວ້ ອາບັດ ໑ ຕົວ ປິດໄວ້ໂດຍບໍ່ແນ່ໃຈ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ພິກຂຸ

ອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງໃຝ່ການສຶກສາ ມາເຖິງ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ອາບັດ ໑ ຕົວແນ່ໃຈແຕ່ປິດໄວ້ ອາບັດ ໑ ຕົວປິດໄວ້ໂດຍບໍ່ແນ່ໃຈ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດເຫຼົ່ານັ້ນທີ່ປິດໄວ້ ໔ ເດືອນແກ່ເພິກສຸນັ້ນແລ້ວ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ການໃຫ້ປະຣິວາດເພື່ອອາບັດທີ່ແນ່ໃຈແຕ່ປິດໄວ້ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດເພື່ອອາບັດທີ່ປິດໄວ້ໂດຍບໍ່ແນ່ໃຈບໍ່ຊອບທຳ ຄວາມບໍ່ຊອບທຳ ຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເພື່ອອາບັດ ໑ ຕົວ"

## ສົງໄດ້ໃຫ້ປະຣິວາດ ໔ ເດືອນ

[໑໔໗] ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນກັບສົງ"

ພິກຂຸນັ້ນຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນແກ່ພິກຂຸນັ້ນ ເມື່ອພິກຂຸນັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນຈຶ່ງຂໍປະຣິວາດ ໑ ເດືອນເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນເພື່ອອາບັດ໔ ຕົວປິດໄວ້ ໔ ເດືອນແກ່ເຮົາ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນບອກແກ່ພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຂ້າພະເຈົ້ານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ" ຂ້າພະເຈົ້ານັ້ນ ຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ຂ້າພະເຈົ້າ ເມື່ອຂ້າພະເຈົ້ານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔

ເດືອນ ເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນ ຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ຂ້າພະເຈົ້າ ຈະປະຕິບັດແນວໃດ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນ ແກ່ພິກຂຸນັ້ນ"

## ວິທີໃຫ້ປະຣິວາດສຳລັບເດືອນນອກນີ້ແລະກຳວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດແນວນີ້ ຄື ພິກຂຸນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຂ້າພະເຈົ້ານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ຂ້າພະເຈົ້ານັ້ນ ຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ຂ້າພະເຈົ້າແລ້ວ ເມື່ອຂ້າພະເຈົ້ານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ເຮົານັ້ນຈຶ່ງຂໍປະຣິວາດ ໑ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນແກ່ເຮົາ ເມື່ອເຮົານັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍເຮົາເພິ່ງຂໍປະຣິວາດ ສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ"ທ່ານຜູ້ຈະເລີນ ຂ້າພະເຈົ້ານັ້ນຂໍປະຣິວາດສຳລັບເດືອນແມ່ນນອກນີ້ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ"

ເພິ່ງຂໍແມ່ນເທື່ອທີ່ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ່ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິຈະຕຸດຖະກຳວາຈາວ່າ

[໑໔໗] "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນ ຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນ ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ພິກຂຸນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວເມື່ອພິກຂຸນັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ

໔ ຕົວ ປິດໄວ້ ໔ ເດືອນ ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ່ ໔ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ່ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນ ສົງໃຫ້ແລ້ວແກ່ພິກຂຸຊື່ນີ້ ສົງເຫັນດ້ວຍ ເພາະແນວນັ້ນ ຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິຢ່າງນີ້

ພິກຂຸທັງຫຼາຍ ພິກຂຸນັ້ນ ເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

ຢູ່ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນ

[໑໔໙] "ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ພິກຂຸນັ້ນມີຄວາມຄິດດັ່ງນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ"ພິກຂຸຊື່ນີ້ຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເຮົານັ້ນຄິດວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ເຮົານັ້ນ ຈຶ່ງຂໍປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວທີ່ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໑ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ຄິດລະອາຍໃຈວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງສົງໄດ້ໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນພິກຂຸທັງຫຼາຍ ພິກຂຸນັ້ນ ເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

[໑໕໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຄື ເດືອນໜຶ່ງຮູ້ ເດືອນໜຶ່ງບໍ່ຮູ້ ພິກຂຸນັ້ນ ຂໍປະຣິວາດສຳລັບເດືອນທີ່ຮູ້ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນທີ່ຮູ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ຮູ້ເດືອນແມ່ນນອກນີ້ ພິກຂຸນັ້ນມີຄວາມຄິດແນວນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ເດືອນ ຄື ເດືອນໜຶ່ງຮູ້

ເດືອນໜຶ່ງບໍ່ຮູ້ ເຮົານັ້ນຂໍປະຣິວາດສຳລັບເດືອນທີ່ຮູ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດເດືອນທີ່ຮູ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນ ແກ່ເຮົາແລ້ວ ເຮົານັ້ນ ກຳລັງຢູ່ປະຣິວາດ ຮູ້ເດືອນແມ່ນນອກນີ້ວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນ ແມ່ນນອກນີ້ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນ ຈຶ່ງຂໍປະຣິວາດສຳລັບເດືອນ ແມ່ນນອກນີ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນແມ່ນ ນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນພິກຂຸທັງຫຼາຍ

ພິກຂຸນັ້ນ ເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

[໑໕໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເດືອນໜຶ່ງຣະລຶກໄດ້ ເດືອນໜຶ່ງຣະລຶກບໍ່ໄດ້ ພິກຂຸນັ້ນຂໍປະຣິວາດສຳລັບເດືອນທີ່ ຣະລຶກໄດ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນທີ່ຣະລຶກ ໄດ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ຣະລຶກເດືອນແມ່ນນອກນີ້ໄດ້ ພິກຂຸນັ້ນມີຄວາມຄິດແນວນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ເດືອນໜຶ່ງຣະລຶກໄດ້ ເດືອນໜຶ່ງຣະລຶກບໍ່ໄດ້ ເຮົານັ້ນຂໍປະຣິວາດສຳລັບ ເດືອນທີ່ຣະລຶກໄດ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນ ທີ່ຣະລຶກໄດ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ຣະລຶກເດືອນແມ່ນນອກນີ້ໄດ້ວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ" ພິກຂຸນັ້ນຈຶ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ ໔ ຕົວປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອ ອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນພິກຂຸທັງຫຼາຍ

ພິກຂຸນັ້ນເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

[໑໕໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ຄື ເດືອນໜຶ່ງແນ່ໃຈ ເດືອນໜຶ່ງບໍ່ແນ່ໃຈ ພິກຂຸນັ້ນຂໍປະຣິວາດສຳລັບເດືອນທີ່ແນ່ໃຈ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນທີ່ແນ່ໃຈ ເພື່ອອາ ບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດແນ່ໃຈເດືອນ ແມ່ນນອກນີ້ ພິກຂຸນັ້ນມີຄວາມຄິດແນວນີ້ວ່າ "ເຮົາຕ້ອງອາບັດສັງຄາທິເສດ ໔ ຕົວປິດໄວ້ ໔ ເດືອນ ເດືອນໜຶ່ງແນ່ໃຈ ເດືອນໜຶ່ງ ບໍ່ແນ່ໃຈ ເຮົານັ້ນຂໍປະຣິວາດສຳລັບເດືອນທີ່ແນ່ໃຈ ເພື່ອອາ ບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນທີ່ແນ່ໃຈ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ເຮົາແລ້ວ ເມື່ອເຮົານັ້ນກຳລັງຢູ່ປະຣິວາດ ແນ່ໃຈເດືອນແມ່ນນອກນີ້ວ່າ "ເຮັດແນວໃດນໍ ເຮົາເພິ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ໔ ຕົວ ປິດໄວ້ ໔

ເດືອນກັບສົງ" ພິກຂຸນັ້ນຈຶ່ງຂໍປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ໔ ຕົວ ປົດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດສຳລັບເດືອນແມ່ນນອກນີ້ ເພື່ອອາບັດ໔ ຕົວປົດໄວ້ ໔ ເດືອນ ແກ່ພິກຂຸນັ້ນພິກຂຸທັງຫຼາຍ

ພິກຂຸນັ້ນເພິ່ງຢູ່ປະຣິວາດ ໔ ເດືອນ ນັບຕໍ່ຈາກເດືອນກ່ອນ

ພິກຂຸຜູ້ຄວນແກ່ມານັດຢູ່ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນ

[໑໕໓] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປົດໄວ້ ໔ ເດືອນ ເດືອນໜຶ່ງຮູ້ແຕ່ປົດໄວ້ ເດືອນໜຶ່ງປົດໄວ້ໂດຍບໍ່ຮູ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນກຳລັງຢູ່ປະຣິວາດ ພິກຂຸອົງອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ມາເຖິງ ກ່າວແນວນີ້ວ່າ"ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປົດໄວ້ ໔ ເດືອນເດືອນໜຶ່ງຮູ້ແຕ່ປົດໄວ້ ເດືອນໜຶ່ງປົດໄວ້ໂດຍທີ່ບໍ່ຮູ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດ໔ ຕົວ ປົດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນແກ່ພິກຂຸນັ້ນ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດ ເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານທັງຫຼາຍ ການໃຫ້ປະຣິວາດສຳລັບເດືອນທີ່ຮູ້ແຕ່ປົດໄວ້ ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດສຳລັບເດືອນທີ່ປົດໄວ້ໂດຍບໍ່ຮູ້ ບໍ່ຊອບທຳ ຄວາມບໍ່ຊອບທຳຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເດືອນໜຶ່ງ".

[໑໕໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວປົດໄວ້ ໔ ເດືອນ ຄື ເດືອນໜຶ່ງຣະລຶກໄດ້ແຕ່ປົດໄວ້ ເດືອນໜຶ່ງປົດໄວ້ໂດຍຣະລຶກບໍ່ໄດ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນ ກຳລັງຢູ່ປະຣິວາດ ພິກຂຸອົງອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາມາເຖິງ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປົດໄວ້ ໔ ເດືອນ ເດືອນໜຶ່ງຣະລຶກໄດ້ແຕ່ປົດໄວ້ ເດືອນໜຶ່ງປົດໄວ້ໂດຍຣະລຶກບໍ່ໄດ້ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປົດໄວ້

໔ ເດືອນແກ່ພິກຂຸນັ້ນ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານທັງຫຼາຍ ການໃຫ້ປະຣິວາດສຳລັບເດືອນທີ່ຣະລຶກໄດ້ແຕ່ປິດໄວ້ ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດສຳລັບເດືອນທີ່ປິດໄວ້ໂດຍຣະລຶກບໍ່ໄດ້ ບໍ່ຊອບທຳ ຄວາມບໍ່ຊອບທຳຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເດືອນໜຶ່ງ"

[໑໕໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ເດືອນໜຶ່ງແນ່ໃຈແຕ່ປິດໄວ້ ເດືອນໜຶ່ງປິດໄວ້ໂດຍບໍ່ແນ່ໃຈ ພິກຂຸນັ້ນຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ເມື່ອພິກຂຸນັ້ນກຳລັງຢູ່ປະຣິວາດພິກຂຸອົງອື່ນຜູ້ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ມາເຖິງກ່າວແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸນີ້ຕ້ອງອາບັດອັນໃດ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດອັນໃດ" ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ທ່ານ ພິກຂຸນີ້ຕ້ອງອາບັດສັງຄາທິເສດ ໔ ຕົວ ປິດໄວ້ ໔ ເດືອນ ຄື ເດືອນໜຶ່ງແນ່ໃຈແຕ່ປິດໄວ້ ເດືອນໜຶ່ງປິດໄວ້ໂດຍບໍ່ແນ່ໃຈ ພິກຂຸນັ້ນ ຂໍປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນກັບສົງ ສົງໄດ້ໃຫ້ປະຣິວາດ ໔ ເດືອນ ເພື່ອອາບັດ ໔ ຕົວ ປິດໄວ້ ໔ ເດືອນແກ່ພິກຂຸນັ້ນແລ້ວ ທ່ານ ພິກຂຸນີ້ຕ້ອງອາບັດເຫຼົ່ານັ້ນ ພິກຂຸນີ້ຢູ່ປະຣິວາດເພື່ອອາບັດເຫຼົ່ານັ້ນ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານທັງຫຼາຍ ການໃຫ້ປະຣິວາດສຳລັບເດືອນທີ່ແນ່ໃຈແຕ່ປິດໄວ້ ຊອບທຳ ຄວາມຊອບທຳຍ່ອມຟັງຂຶ້ນ ສ່ວນການໃຫ້ປະຣິວາດສຳລັບເດືອນທີ່ປິດໄວ້ໂດຍບໍ່ແນ່ໃຈ ບໍ່ຊອບທຳ ຄວາມບໍ່ຊອບທຳຍ່ອມຟັງບໍ່ຂຶ້ນ ທ່ານທັງຫຼາຍ ພິກຂຸເປັນຜູ້ຄວນແກ່ມານັດເດືອນໜຶ່ງ"

## ສຸດທັນຕະປະຣິວາດ

## ປະຣິວາດສຳລັບອາບັດຫຼາຍຕົວ ປິດໄວ້ຫຼາຍເທື່ອ

[໑໕໗] ສະໄໝນັ້ນ ພິກຂຸອົງໜຶ່ງຕ້ອງອາບັດສັງຄາທິເສດຫຼາຍຕົວ ພິກຂຸນັ້ນບໍ່ຮູ້ທີ່ສຸດອາບັດ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີ ຈຶ່ງບອກແກ່ພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດຫຼາຍຕົວ ຂ້າພະເຈົ້າບໍ່ຮູ້ທີ່ສຸດອາບັດ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີຂ້າພະເຈົ້າຈະປະຕິບັດແນວໃດ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເຊັ່ນນັ້ນ ສົງຈົ່ງໃຫ້ສຸດທັນຕະປະຣິວາດເພື່ອອາບັດເຫຼົ່ານັ້ນ ແກ່ພິກຂຸນັ້ນ"

## ວິທີໃຫ້ສຸດທັນຕະປະຣິວາດແລະກຳວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສຸດທັນຕະປະຣິວາດແນວນີ້ ຄື ພິກຂຸນັ້ນ ເພິ່ງເຂົ້າໄປຫາສົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຕ້ອງອາບັດສັງຄາທິເສດຫຼາຍຕົວຂ້າພະເຈົ້າບໍ່ຮູ້ທີ່ສຸດອາບັດ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີ ທ່ານຜູ້ຈະເລີນ ຂ້າພະເຈົ້ານັ້ນຂໍສຸດທັນຕະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ"

ເພິ່ງຂໍແມ່ນເທື່ອທີ່ ໒ ຯລຯ

ເພິ່ງຂໍແມ່ນເທື່ອທີ່ ໓ ຯລຯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮັບຮູ້ດ້ວຍຍັດຕິຈະຕຸດຖະກຳວາຈາວ່າ

[໑໔໗] "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ຕ້ອງອາບັດສັງຄາທິເສດຫຼາຍຕົວ ພິກຂຸນັ້ນບໍ່ຮູ້ທີ່ສຸດອາບັດ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີ ພິກຂຸນັ້ນ ຂໍສຸດທັນຕະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ສຸດທັນຕະປະຣິວາດ ເພື່ອອາບັດເຫຼົ່ານັ້ນ ແກ່ພິກຂຸຊື່ນີ້ ນີ້ເປັນຍັດຕິທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ຕ້ອງອາບັດສັງຄາທິເສດຫຼາຍຕົວພິກຂຸນັ້ນບໍ່ຮູ້ທີ່ສຸດອາບັດ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີ ພິກຂຸນັ້ນຂໍສຸດທັນຕະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງເພິ່ງໃຫ້ສຸດທັນຕະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ສຸດທັນຕະປະຣິວາດເພື່ອອາບັດເຫຼົ່ານັ້ນ ແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ່ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ແມ່ນເທື່ອທີ່ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ສຸດທັນຕະປະຣິວາດ ເພື່ອອາບັດເຫຼົ່ານັ້ນ ສົງໃຫ້ແລ້ວແກ່ພິກຂຸຊື່ນີ້ ສົງເຫັນດ້ວຍເພາະແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືເອົາຄວາມນິ່ງນັ້ນເປັນມະຕິແນວນີ້"

## ວິທີໃຫ້ສຸດທັນຕະປະຣິວາດ

[໑໘໗] ພິກຂຸທັງຫຼາຍ ສົງເພິ່ງໃຫ້ສຸດທັນຕະປະຣິວາດແນວນີ້ແລ ສົງເພິ່ງໃຫ້ປະຣິວາດຢ່າງນີ້ ພິກຂຸທັງຫຼາຍ ສົງເພິ່ງໃຫ້ສຸດທັນຕະປະຣິວາດແນວໃດນໍ ພິກຂຸບໍ່ຮູ້ທີ່ສຸດອາບັດບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດບໍ່ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸຮູ້ທີ່ສຸດອາບັດ ແຕ່ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດໄດ້ ແຕ່ຣະລຶກທີ່ສຸດຣາຕີບໍ່ໄດ້ ແນ່ໃຈໃນທີ່ສຸດອາບັດ ແຕ່ບໍ່ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸຮູ້ທີ່ສຸດອາບັດບາງສ່ວນ ບໍ່ຮູ້ບາງສ່ວນ ບໍ່ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ຣະລຶກທີ່ສຸດຣາຕີບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດບາງສ່ວນແນ່ໃຈໃນທີ່ສຸດອາບັດບາງສ່ວນ ບໍ່ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸບໍ່ຮູ້ທີ່ສຸດອາບັດ ຮູ້ທີ່ສຸດຣາຕີບາງສ່ວນ ບໍ່ຮູ້ບາງສ່ວນ ຣະລຶກທີ່ສຸດອາບັດບໍ່ໄດ້ຣະລຶກທີ່ສຸດຣາຕີບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີບາງສ່ວນ ແນ່ໃຈໃນບາງສ່ວນ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸຮູ້ທີ່ສຸດອາບັດ ຮູ້ທີ່ສຸດຣາຕີບາງສ່ວນ ບໍ່ຮູ້ບາງສ່ວນ ຣະລຶກທີ່ສຸດອາບັດໄດ້ ຣະລຶກທີ່ສຸດຣາຕີບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ແນ່ໃຈໃນທີ່ສຸດອາບັດ ບໍ່ແນ່ໃຈໃນທີ່ສຸດຣາຕີບາງສ່ວນ ແນ່ໃຈໃນບາງສ່ວນ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸຮູ້ທີ່ສຸດອາບັດບາງສ່ວນ ບໍ່ຮູ້ບາງສ່ວນ ຮູ້ທີ່ສຸດຣາຕີບາງສ່ວນ ບໍ່ຮູ້ບາງສ່ວນຣະລຶກທີ່ສຸດອາບັດບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ຣະລຶກທີ່ສຸດຣາຕີບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດບາງສ່ວນ ແນ່ໃຈໃນບາງສ່ວນ ບໍ່ແນ່ໃຈໃນທີ່ສຸດຣາຕີບາງສ່ວນ ແນ່ໃຈໃນບາງສ່ວນ ສົງເພິ່ງໃຫ້ສຸດທັນຕະປະຣິວາດ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສຸດທັນຕະປະຣິວາດແນວນີ້ແລ

## ວິທີໃຫ້ປະຣິວາດ

[໑໘໘] ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດແນວໃດ ພິກຂຸຮູ້ທີ່ສຸດອາບັດ ຮູ້ທີ່ສຸດຣາຕີຣະລຶກທີ່ສຸດອາບັດໄດ້ ຣະລຶກທີ່ສຸດຣາຕີໄດ້ ແນ່ໃຈໃນທີ່ສຸດອາບັດ ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ປະຣິວາດ

ພິກຂຸບໍ່ຮູ້ທີ່ສຸດອາບັດ ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບໍ່ໄດ້ ຣະລຶກທີ່ສຸດຣາຕີໄດ້ບໍ່ແນ່ໃຈໃນທີ່ສຸດອາບັດ ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ປະຣິວາດ

ພິກຂຸຮູ້ທີ່ສຸດອາບັດບາງສ່ວນ ບໍ່ຮູ້ບາງສ່ວນ ຮູ້ທີ່ສຸດຣາຕີ ຣະລຶກທີ່ສຸດອາບັດບາງສ່ວນໄດ້ ຣະລຶກບາງສ່ວນບໍ່ໄດ້ ຣະລຶກທີ່ສຸດຣາຕີໄດ້ ບໍ່ແນ່ໃຈໃນທີ່ສຸດອາບັດບາງສ່ວນ ແນ່ໃຈໃນບາງສ່ວນ ແນ່ໃຈໃນທີ່ສຸດຣາຕີ ສົງເພິ່ງໃຫ້ປະຣິວາດພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດແນວນີ້ແລ

**ປະຣິວາດ ຈົບ**

# ໓. ຈັດຕະຣິສະກະ

## ວ່າດ້ວຍກໍລະນີຕົວຢ່າງ ໔໐ ກໍລະນີ

### ພິກຂຸຢູ່ປະຣິວາດສຶກ

[໑໖໐] ສະໄໝນັ້ນ ພິກຂຸອົງໜຶ່ງກຳລັງຢູ່ປະຣິວາດ ສຶກໄປ ພິກຂຸນັ້ນ ກັບມາຂໍອຸປະສົມບົດກັບພິກຂຸທັງຫຼາຍອີກ

### ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດສຶກໄປ ປະຣິວາດຂອງຜູ້ສຶກຍ່ອມໃຊ້ບໍ່ໄດ້ ຖ້າພິກຂຸນັ້ນອຸປະສົມບົດໃໝ່ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໑)

### ພິກຂຸຢູ່ປະຣິວາດລຸດຖານະເປັນສາມະເນນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ລຸດຖານະເປັນສາມະເນນປະຣິວາດຂອງສາມະເນນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນອຸປະສົມບົດໃໝ່ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໒)

## ພິກຂຸຢູ່ປະຣິວາດວິກົນຈະລິດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິ ວາດເກີດວິກົນຈະລິດ ປະຣິວາດຂອງພິກຂຸນັ້ນຜູ້ວິກົນຈະລິດໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຫາຍວິກົນຈະລິດ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໓)

## ພິກຂຸຢູ່ປະຣິວາດມີຈິດຟຸ້ງຊ່ານ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ມີຈິດຟຸ້ງຊ່ານ ປະຣິວາດຂອງພິກຂຸຜູ້ມີຈິດຟຸ້ງຊ່ານນັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນມີຈິດບໍ່ຟຸ້ງຊ່ານອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໔)

## ພິກຂຸຢູ່ປະຣິວາດກະສັບກະສ່າຍເພາະເວທະນາ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ເປັນຜູ້ກະສັບກະສ່າຍເພາະເວທະນາ ປະຣິວາດຂອງພິສຸຜູ້ກະສັບກະສ່າຍເພາະເວທະນານັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນບໍ່ກະສັບກະສ່າຍເພາະເວທະນາອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໕)

## ພິກຂຸຢູ່ປະຣິວາດ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ ປະຣິວາດຂອງພິກຂຸນັ້ນຜູ້ຖືກສົງລົງອຸກເຂປະນີຍະກຳນັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໖)

## ພິກຂຸຢູ່ປະຣິວາດ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຮັດຄືນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຮັດຄືນອາບັດ ປະຣິວາດຂອງພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳນັ້ນໃຊ້ບໍ່ໄດ້ ຖ້າພິກຂຸ

ນັ້ນ ຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໗)

## ພິກຂຸຢູ່ປະຣິວາດຖືກສົງລົງອຸກເຂປະນີຍະກຳເພາະບໍ່ສະລະທິດຖິບາບ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ສະລະທິດຖິບາບ ປະຣິວາດຂອງພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳນັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ເພິ່ງຢູ່ປະຣິວາດທີ່ເຫຼືອຕໍ່ໄປ (໘)

## ພິກຂຸຄວນແກ່ການດຶງເຂົ້າຫາອາບັດເດີມສຶກ

[໑໖໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມສຶກເສຍ ການດຶງພິກຂຸຜູ້ສຶກແລ້ວເຂົ້າຫາອາບັດເດີມນັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນອຸປະສົມບົດໃໝ່ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໙)

## ພິກຂຸຜູ້ຄວນດຶງເຂົ້າຫາອາບັດເດີມລຸດຖານະເປັນສາມະເນນເປັນຕົ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ການດຶງເຂົ້າຫາອາບັດເດີມ ລຸດຖານະເປັນສາມະເນນ ຯລຯ ເກີດວິກົນຈະລິດ ຯລຯ ມີຈິດຟຸ້ງຊ່ານ ຯລຯ ກະສັບກະສ່າຍເພາະເວທະນາ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຮັດຄືນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ສະລະທິດຖິບາບ ການດຶງພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳນັ້ນເຂົ້າຫາອາບັດເດີມໃຊ້ບໍ່ໄດ້ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໑໐-໑໖)

## ພິກຂຸຜູ້ຄວນແກ່ມານັດສຶກ

[໑໖໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ມານັດສຶກເສຍ ການໃຫ້ມານັດແກ່ພິກຂຸນັ້ນຜູ້ສຶກແລ້ວໃຊ້ບໍ່ໄດ້ ຖ້າພິກສູນັ້ນອຸປະສົມບົດໃໝ່ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວສົງເພິ່ງໃຫ້ມານັດແກ່ພິກຂຸນັ້ນ (໑໗)

## ພິກຂຸຜູ້ຄວນແກ່ມານັດລຸດຖານະເປັນສາມະເນນເປັນຕົ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ມານັດ ລຸດຖານະເປັນສາມະເນນ ຯລຯ ເກີດວິກົນຈະລິດ ຯລຯ ມີຈິດຟຸ້ງຊ່ານ ຯລຯ ກະສັບກະສ່າຍເພາະເວທະນາ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຮັດຄືນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ສະລະທິດຖິບາບ ການໃຫ້ມານັດແກ່ພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳນັ້ນໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ສົງເພິ່ງໃຫ້ມານັດແກ່ພິກຂຸນັ້ນ (໑໗-໔໔)

## ພິກຂຸຜູ້ປະພຶດມານັດສຶກ

[໑໖໓] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງປະພຶດມານັດສຶກເສຍການປະພຶດມານັດຂອງພິກຂຸຜູ້ສຶກແລ້ວໃຊ້ບໍ່ໄດ້ ຖ້າພິກຂຸນັ້ນອຸປະສົມບົດໃໝ່ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວ ເປັນອັນຢູ່ດີແລ້ວ ມານັດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ມານັດທີ່ປະພຶດແລ້ວເປັນອັນປະພຶດດີແລ້ວ ເພິ່ງປະພຶດມານັດທີ່ເຫຼືອຕໍ່ໄປ (໔໕)

## ພິກຂຸຜູ້ປະພຶດມານັດລຸດຖານະເປັນສາມະເນນເປັນຕົ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ກຳລັງປະພຶດມານັດ ລຸດຖານະເປັນສາມະເນນ ຯລຯ ເກີດວິກົນຈະລິດ ຯລຯ ມີຈິດຟຸ້ງຊ່ານ ຯລຯ ກະສັບກະສ່ວຍເພາະເວທະນາ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຮັດຄືນອາບັດ ຯລຯ ຖືກສົງລົງອຸກເຂປະນີຍະກຳ ເພາະບໍ່ສະລະທິດຖິບາບການປະພຶດມານັດຂອງພິກຂຸນັ້ນຜູ້ຖືກສົງລົງອຸກເຂປະນີຍະກຳໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວ ເປັນອັນໃຫ້ດີແລ້ວປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ມານັດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ມານັດທີ່ປະພຶດແລ້ວເປັນອັນປະພຶດດີແລ້ວ ເພິ່ງປະພຶດມານັດທີ່ເຫຼືອຕໍ່ໄປ (໔໖-໓໔)

## ພິກຂຸຜູ້ຄວນແກ່ອັບພານສຶກ

[໑໖໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານສຶກເສຍ ການອັບ

ພານ ພິກຂຸນັ້ນຜູ້ສຶກແລ້ວໃຊ້ບໍ່ໄດ້ ຖ້າພິກຂຸນັ້ນອຸປະສົມບົດໃໝ່ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວປ◌ັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ມານັດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ມານັດທີ່ປະພຶດແລ້ວເປັນອັນປະພຶດດີແລ້ວ ສົງເພິ່ງອັບພານພິກຂຸນັ້ນ (໑໑)

## ພິກຂຸຜູ້ຄວນແກ່ອັບພານລຸດຖານະເປັນສາມະເນນເປັນຕົ້ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ລຸດຖານະເປັນສາມະເນນ ฯลฯ ເກີດວິກົນຈະລິດ ฯลฯ ມີຈິດຟຸ້ງຊ່ານ ฯลฯ ກະສັບກະສ່າຍເພາະເວທະນາ ฯลฯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ເຫັນວ່າເປັນອາບັດ ฯลฯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່{ເຮັດ,ທຳ}ຄືນອາບັດ ฯลฯ ຖືກສົງລົງອຸກເຂປະນີຍະກຳເພາະບໍ່ສະລະທິດຖິບາບ ການອັບພານ ພິກຂຸນັ້ນຜູ້ຖືກສົງລົງອຸກເຂປະນີຍະກຳໃຊ້ບໍ່ໄດ້ ຖ້າພິກຂຸນັ້ນຖືກເອີ້ນເຂົ້າໝູ່ອີກ ໃຫ້ປະຣິວາດເດີມນັ້ນແຫຼະແກ່ພິກຂຸນັ້ນ ປະຣິວາດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ປະຣິວາດທີ່ຢູ່ແລ້ວເປັນອັນຢູ່ດີແລ້ວ ມານັດທີ່ໃຫ້ແລ້ວເປັນອັນໃຫ້ດີແລ້ວ ມານັດທີ່ປະພຶດແລ້ວເປັນອັນປະພຶດດີແລ້ວສົງເພິ່ງອັບພານພິກຂຸນັ້ນ (໑໔-໔໐)

**ຈັດຕາລີສະກະ ຈົບ**

# ໔. ສັດຕິງສະກະ

## ວ່າດ້ວຍກໍລະນີຕົວຢ່າງ ໑໖ ກໍລະນີ

## ພິກຂຸກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດ

[໑໖໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວ ໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາ

ອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໙)

## ພິກຂຸຜູ້ຄວນແກ່ມານັດຕ້ອງອາບັດສັງຄາທິເສດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ມານັດ ໗ລ໗ (໑໐-໑໘)

ພິກຂຸຜູ້ປະພຶດມານັດຕ້ອງອາບັດສັງຄາທິເສດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ປະພຶດມານັດ ๗ລ๗ (໑໙-໔໗)

(ເພິ່ງອະທິບາຍໃຫ້ພິສະດານເໝືອນການຢູ່ປະຣິວາດ)

## ພິກຂຸຜູ້ຄວນແກ່ອັບພານຕ້ອງອາບັດສັງຄາທິເສດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ(໔໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໔໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໕໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໕໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໕໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໕໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈໍານວນນັບໄດ້ແດ່ ມີຈໍານວນນັບບໍ່ໄດ້ແດ່ ບໍ່ໄດ້ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໓໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈໍານວນນັບໄດ້ແດ່ ມີຈໍານວນນັບບໍ່ໄດ້ແດ່ ປິດໄວ້ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໓໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ມີຈໍານວນນັບໄດ້ແດ່ ມີຈໍານວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໓໖)

**ສັດຕົງສະກະ ຈົບ**

# ໕. ມານັດຕະສະຕະ

## ວ່າດ້ວຍກໍລະນີຕົວຢ່າງການໃຫ້ມານັດ ໑໐໐ ກໍລະນີ

### ພິກຂຸຕ້ອງອາບັດສັງຄາທິເສດສຶກອຸປະສົມບົດໃໝ່

[໑໖໖] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ບໍ່ໄດ້ປິດໄວ້ແລ້ວສຶກ ຖ້າພິກຂຸນັ້ນອຸປະສົມບົດໃໝ່ ບໍ່ປິດອາບັດເຫຼົ່ານັ້ນ ພິກຂຸທັງຫຼາຍ ສົງເພິ່ງໃຫ້ມານັດແກ່ພິກຂຸນັ້ນ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ບໍ່ໄດ້ປິດໄວ້ແລ້ວສຶກ ພິກຂຸນັ້ນອຸປະສົມບົດໃໝ່ ປິດອາບັດເຫຼົ່ານັ້ນ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວປິດໄວ້ແລ້ວສຶກພິກຂຸນັ້ນອຸປະສົມບົດໃໝ່ ບໍ່ປິດອາບັດເຫຼົ່ານັ້ນ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ປິດໄວ້ແລ້ວ ສຶກພິກຂຸນັ້ນອຸປະສົມບົດໃໝ່ ປິດອາບັດເຫຼົ່ານັ້ນ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໔)

[໑໕໗] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ປິດໄວ້ແດ່ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະຫຼັງ ຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ປິດໄວ້ແດ່ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະຫຼັງຕາມທີ່ປິດໄວ້ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ປິດໄວ້ແດ່ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫຼັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະເທື່ອຫຼັງຕາມທີ່ປິດໄວ້ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໘)

[໑໕໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດພິກຂຸນັ້ນຮູ້ແລ້ວໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດພິກຂຸນັ້ນບໍ່ຮູ້ບໍ່ໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວບໍ່ປິດໃນ

ພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສະມະບໃໝ່ ອາບັດເຫຼົ່າໃດພິກຂຸນັ້ນຮູ້ແລ້ວໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດພິກຂຸນັ້ນບໍ່ຮູ້ບໍ່ໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໄວ້ໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະຫຼັງຕາມທີ່ປິດໄວ້ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໄວ້ໃນພາຍຫຼັງ ອາບັດເຫຼົ່າໃດພິກຂຸນັ້ນບໍ່ຮູ້ບໍ່ໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວບໍ່ປິດໃນພາຍຫຼັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະເທື່ອຫຼັງຕາມທີ່ປິດໄວ້ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໄວ້ໃນພາຍຫຼັງ ອາບັດເຫຼົ່າໃດບໍ່ຮູ້ບໍ່ໄດ້ປິດໄວ້ເມືອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໄວ້ໃນພາຍຫລັງພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໒)

[໑໖໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປິດໄວ້ເມືອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ບໍ່ປິດໄວ້ໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ບໍ່ໄດ້ປິດໄວ້ເມືອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວບໍ່ປິດໃນພາຍຫລັງ ພິກຂຸທັງຫຼາຍສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້

ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປົດໄວ້ເມື່ອກ່ອນຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວ ບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ບໍ່ໄດ້ປົດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ ປິດໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະເທື່ອຫຼັງຕາມທີ່ປົດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວ ໄດ້ປົດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ປົດໄວ້ໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປົດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ບໍ່ປິດໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະເທື່ອຫຼັງຕາມທີ່ປົດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປົດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ປົດໄວ້ໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປົດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ປິດໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະເທື່ອຫຼັງຕາມທີ່ປົດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໖)

[໑໗໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວພິກຂຸນັ້ນແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປົດໄວ້ເມື່ອກ່ອນແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປົດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນຕາມທີ່ປົດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ພິກຂຸນັ້ນແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປົດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປົດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະ{ຄັ້ງ,ເທື່ອ}ຫຼັງຕາມທີ່ປົດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ພິກຂຸນັ້ນແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນແລະເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໑໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ພິກຂຸນັ້ນແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍ ສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໔໐)

## ພິກຂຸຕ້ອງອາບັດສັງຄາທິເສດລຸດຖານະເປັນສາມະເນນເປັນຕົ້ນ

[໑໗໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວບໍ່ໄດ້ປິດໄວ້ແລ້ວລຸດຖານະເປັນສາມະເນນ ຯລຯ ເກີດວິກົນຈະລິດ ຯລຯ ມີຈິດຟຸ້ງຊ່ານ ຯລຯ (ເພິ່ງຂະຫຍາຍໃຫ້ພິສະດານຄືໃນຕອນຕົ້ນ) ເກີດກະສັບກະສ່າຍເພາະເວທະນາ ຯລຯ

ອາບັດສັງຄາ ທິເສດຂອງພິກຂຸນັ້ນຫຼາຍຕົວ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ຯລຯ ອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ຯລຯ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ຯລຯ

ອາບັດບາງຢ່າງແນ່ໃຈ ອາບັດບາງຢ່າງບໍ່ແນ່ໃຈ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນກະສັບກະສ່າຍເພາະເວທະນາ ເມື່ອຫາຍແລ້ວ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ພິກຂຸທັງຫຼາຍສົງເພິ່ງໃຫ້ປະຣິວາດໃນກອງອາບັດເທື່ອກ່ອນ ແລະເທື່ອຫຼັງຕາມທີ່ປິດໄວ້ ແລ້ວໃຫ້ມານັດແກ່ພິກຂຸນັ້ນ (໘໑-໑໐໐)

**ມານັດຕະສະຕະ ຈົບ**

# ຜ. ສະມູລາຍະສະໂມທານປະຣິວາດຈະຕຸສະຕະ

# ວ່າດ້ວຍສະໂມທານປະຣິວາດກັບການດຶງເຂົ້າຫາອາບັດເດີມ ໔໐໐ ກໍລະນີ

## ພິກຂຸກໍາລັງຢູ່ປະຣິວາດສຶກອຸປະສົມບົດໃໝ່

[໑໗໘] ພິກຂຸທັງຫຼາຍ ກໍ ໃນກໍລະນີນີ້ ພິກຂຸກໍາລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ບໍ່ໄດ້ປິດໄວ້ແລ້ວສຶກເສຍ ພິກຂຸນັ້ນອຸປະສົມບົດໃໝ່ ບໍ່ປິດອາບັດເຫຼົ່ານັ້ນສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍາລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ບໍ່ໄດ້ປິດໄວ້ແລ້ວສຶກ ພິກຂຸນັ້ນອຸປະສົມບົດໃໝ່ ປິດອາບັດເຫຼົ່ານັ້ນສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍາລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແລ້ວສຶກ ພິກຂຸນັ້ນອຸປະສົມບົດໃໝ່ ບໍ່ປິດອາບັດເຫຼົ່ານັ້ນສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍາລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແລ້ວສຶກ ພິກຂຸນັ້ນອຸປະສົມບົດໃໝ່ ປິດອາບັດເຫຼົ່ານັ້ນ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໔)

[໑໗໖] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດ ໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ໄດ້ປິດໄວ້ເມື່ອກ່ອນ ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໘)

[໑໗໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຮູ້ ບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມື່ອກ່ອນຮູ້ອາບັດເຫຼົ່ານັ້ນບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດ ບໍ່ຮູ້ບໍ່ໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນ ບໍ່ປິດໄວ້ໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຮູ້ ບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້

ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມື່ອກ່ອນຮູ້ອາບັດເຫຼົ່ານັ້ນບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດບໍ່ຮູ້ບໍ່ໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ທ່ານ (໑໐)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຮູ້ ບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມື່ອກ່ອນຮູ້ອາບັດເຫຼົ່ານັ້ນແລ້ວປິດໃນພາຍຫລັງ ອາບັດເຫຼົ່າໃດບໍ່ຮູ້ບໍ່ໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນບໍ່ປິດໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຮູ້ ບາງຢ່າງບໍ່ຮູ້ ປິດອາບັດທີ່ຮູ້ ບໍ່ປິດອາບັດທີ່ບໍ່ຮູ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຮູ້ແລ້ວໄດ້ປິດໄວ້ເມື່ອກ່ອນຮູ້ອາບັດເຫຼົ່ານັ້ນແລ້ວປິດໃນພາຍຫລັງ ອາບັດເຫຼົ່າໃດບໍ່ຮູ້ ບໍ່ໄດ້ປິດໄວ້ເມື່ອກ່ອນ ຮູ້ອາບັດເຫຼົ່ານັ້ນແລ້ວປິດໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໒)

[໑໗໕] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ບາງຢ່າງຣະລຶກບໍ່ໄດ້ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວບໍ່ປິດໃນພາຍຫລັງອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ ບໍ່ປິດໃນພາຍຫຼັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນ ສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ບໍ່ປິດໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວປິດໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນ

ເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວປິດໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວບໍ່ປິດໃນພາຍຫລັງສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ບາງຢ່າງຣະລຶກບໍ່ໄດ້ ປິດອາບັດທີ່ຣະລຶກໄດ້ ບໍ່ປິດອາບັດທີ່ຣະລຶກບໍ່ໄດ້ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດຣະລຶກໄດ້ແລ້ວໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ແລ້ວປິດໃນພາຍຫລັງ ອາບັດເຫຼົ່າໃດຣະລຶກບໍ່ໄດ້ ບໍ່ໄດ້ປິດໄວ້ເມື່ອກ່ອນ ຣະລຶກອາບັດເຫຼົ່ານັ້ນໄດ້ປິດໃນພາຍຫລັງສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໖)

[໑໗໖] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈ ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໑໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ແນ່ໃຈໃນອາບັດບາງຢ່າງ ບໍ່ແນ່ໃຈໃນອາບັດບາງຢ່າງ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນສຶກແລ້ວອຸປະສົມບົດໃໝ່ ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໒໐)

## ພິກຂຸກຳລັງຢູ່ປະຣິວາດລຸດຖານະເປັນສາມະເນນເປັນຕົ້ນ

[໑໗໗] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ບໍ່ໄດ້ປິດໄວ້ແລ້ວກັບເປັນສາມະເນນ ฯລฯ ເກີດວິກົນຈະລິດฯລฯ ເປັນຜູ້ມີຈິດຟຸ້ງຊ່ານ ฯລฯ ກະສັບກະສ່າຍເພາະເວທະນາ ฯລฯ ອາບັດຂອງພິກຂຸນັ້ນປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ฯລฯ (ເພິ່ງໃຫ້ພິສະດານ ເໝືອນທີ່ໃຫ້ພິສະດານແລ້ວໃນຕອນຕົ້ນ)

ອາບັດບາງຢ່າງພິກຂຸນັ້ນຮູ້ ອາບັດບາງຢ່າງບໍ່ຮູ້ ฯລฯ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ฯລฯ ອາບັດບາງຢ່າງແນ່ໃຈ ອາບັດບາງຢ່າງບໍ່ແນ່ໃຈ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນກະສັບກະສ່າຍເພາະເວທະນາ ເມື່ອຫາຍຈາກກະສັບກະສ່າຍເພາະເວທະນາແລ້ວ ອາບັດເຫຼົ່າໃດພິກຂຸນັ້ນແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດ ພິກຂຸນັ້ນບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ฯລฯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ປິດໄວ້ເມື່ອກ່ອນ ແນ່ໃຈໄດ້ປິດອາບັດເຫຼົ່ານັ້ນໃນພາຍຫລັງ ฯລฯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ฯລฯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໔໑-໑໐໐)

## ພິກຂຸຜູ້ຄວນແກ່ມານັດເປັນຕົ້ນຕ້ອງອາບັດສັງຄາທິເສດ

[໑໗໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ມານັດ ຯລຯ ພິກຂຸທັງຫຼາຍອັນໜຶ່ງ ໃນກໍລະນີນີ້ ພິກຂຸກຳລັງປະພຶດມານັດ ຯລຯ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

(ພິກຂຸຜູ້ຄວນແກ່ມານັດ ພິກຂຸຜູ້ປະພຶດມານັດ ແລະພິກຂຸຜູ້ຄວນແກ່ອັບພານ ເພິ່ງໃຫ້ພິສະດານເໝືອນປະຣິວາດ ສັນນັ້ນ) (໑໐໑-໓໔໐)

## ພິກຂຸຜູ້ຄວນແກ່ອັບພານລຸດຖານະເປັນສາມະເນນເປັນຕົ້ນ

[໑໗໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຄວນແກ່ອັບພານ ຕ້ອງອາບັດສັງຄາທິເສດຫຼາຍຕົວໃນລະຫວ່າງ ບໍ່ປິດໄວ້ແລ້ວ ລຸດຖານະເປັນສາມະເນນ ຯລຯ ເກີດວິກົນ ຈະລິດ ຯລຯ ມີຈິດຟຸ້ງຊ່ານ ຯລຯ ກະສັບກະສ່າຍເພາະເວທະນາ ຯລຯ

ອາບັດຂອງພິກຂຸນັ້ນປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ຯລຯ ອາບັດບາງຢ່າງພິກຂຸນັ້ນຮູ້ອາບັດບາງຢ່າງບໍ່ຮູ້ ຯລຯ ອາບັດບາງຢ່າງພິກຂຸນັ້ນຣະລຶກໄດ້ ອາບັດບາງຢ່າງຣະລຶກບໍ່ໄດ້ ຯລຯ

ອາບັດບາງຢ່າງແນ່ໃຈ ອາບັດບາງຢ່າງບໍ່ແນ່ໃຈ ປິດອາບັດທີ່ແນ່ໃຈ ບໍ່ປິດອາບັດທີ່ບໍ່ແນ່ໃຈ ພິກຂຸນັ້ນກະສັບກະສ່າຍເພາະເວທະນາ ເມື່ອຫາຍຈາກະສັບກະສ່າຍເພາະເວທະນາແລ້ວອາບັດເຫຼົ່າໃດ ພິກຂຸນັ້ນແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈບໍ່ປິດອາບັດເຫຼົ່ານັ້ນໃນພາຍຫລັງ ຯລຯ

ອາບັດເຫຼົ່າໃດແນ່ໃຈໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ອາບັດເຫຼົ່າໃດບໍ່ແນ່ໃຈບໍ່ໄດ້ປິດໄວ້ເມື່ອກ່ອນ ແນ່ໃຈປິດອາບັດເຫຼົ່ານັ້ນໃນພາຍຫລັງ ສົງເພິ່ງດຶງພິກຂຸນັ້ນເຂົ້າຫາອາບັດເດີມ ແລະເພິ່ງໃຫ້ສະໂມທານປະຣິວາດເພື່ອອາບັດຕົວກ່ອນ ບັນດາອາບັດຕາມທີ່ປິດໄວ້ແກ່ພິກຂຸນັ້ນ (໓໔໑-໔໐໐)

**ສະມູລາຍະສະໂມທານປະຣິວາດຈະຕຸສະຕະ ຈົບ**

# ກ. ປະຣິມານາທິວານອັດຖະກະ

## ວ່າດ້ວຍວາຣະອາບັດມີຈໍານວນນັບໄດ້ເປັນຕົ້ນ ໗ ກໍລະນີ

[໑໗໐] ພິກຂຸທັງຫຼາຍ ກໍ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍຕົວ ມີຈໍານວນນັບໄດ້ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ມີຈໍານວນນັບບໍ່ໄດ້ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ອາບັດມີຊື່ຢ່າງດຽວກັນ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ອາບັດມີຊື່ຕ່າງ ໆ ກັນ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ອາບັດເປັນສະພາຄະກັນ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ອາບັດບໍ່ເປັນສະພາຄະກັນ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ອາບັດກໍານົດໄດ້ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ

ກະຈາຍໄປ ບໍ່ໄດ້ປິດໄວ້ແລ້ວສຶກ ຯລຯ (ເພິ່ງໃຫ້ພິສະດານເໝືອນໃນຕອນຕົ້ນ)ປະຣິມາ

**ນາທິວານອັດຖະກະ ຈົບ**

# ໗. ເທວະພິກຂຸວານເອກາທະສະກະ

## ວ່າດ້ວຍວາຣະການໃຫ້ມານັດແກ່ພິກຂຸ ໔ ອົງ ໑໑ ກໍລະນີ

[໑໗໑] ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໑)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນບໍ່ແນ່ໃຈໃນອາບັດສັງຄາທິເສດອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໒)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດປະສົມກັນ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໓)

ພິກຂຸ ໔ ອົງ ຕ້ອງອາບັດປະສົມກັນ໑ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດປະສົມກັນວ່າເປັນອາບັດສັງຄາທິເສດ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໔)

ພິກຂຸ ໔ ອົງ ຕ້ອງອາບັດປະສົມກັນ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດປະສົມກັນວ່າເປັນອາບັດປະສົມກັນ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໕)

ພິກຂຸ ໔ ອົງ ຕ້ອງລະຫຸກາບັດ(ອາບັດເບົາ)ລ້ວນ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນລະຫຸກາບັດລ້ວນວ່າເປັນອາບັດສັງຄາທິເສດ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ສົງເພິ່ງໃຫ້ອົງນັ້ນ ສະແດງອາບັດທຸກກົດ ເພິ່ງປັບພິກຂຸທັງ ໔ ອົງຕາມທຳ (໖)

ພິກຂຸ ໔ ອົງ ຕ້ອງລະຫຸກາບັດລ້ວນ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນລະຫຸກາບັດລ້ວນວ່າ ເປັນລະຫຸກາບັດລ້ວນ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ເພິ່ງປັບພິກຂຸທັງ ໔ ອົງຕາມທຳ (໗)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ອົງໜຶ່ງຄິດວ່າ "ຈັກບອກ" ອົງໜຶ່ງຄິດວ່າ "ຈັກບໍ່ບອກ"ພິກຂຸນັ້ນປິດໄວ້ເຖິງຍາມທີ່ໜຶ່ງແດ່ ປິດໄວ້ເຖິງຍາມທີ່ສອງແດ່ ປິດໄວ້ເຖິງຍາມທີ່ສາມແດ່ ເມື່ອອະຣຸນຂຶ້ນແລ້ວເປັນອັນປິດອາບັດ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ(໘)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ຈຶ່ງໄປດ້ວຍຄິດວ່າ "ຈັກບອກ" ໃນລະຫວ່າງທາງ ອົງໜຶ່ງເກີດຄວາມຄິດລົບຫລູ່ວ່າ "ຈັກບໍ່ບອກ" ພິກຂຸນັ້ນປິດໄວ້ເຖິງຍາມທີ່ໜຶ່ງແດ່ ປິດໄວ້ເຖິງຍາມທີ່ສອງແດ່ ປິດໄວ້ເຖິງຍາມທີ່ສາມແດ່ ເມື່ອອະຣຸນຂຶ້ນແລ້ວເປັນອັນປິດອາບັດ ອົງໃດປິດໄວ້ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໙)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ແລ້ວເກີດວິກົນຈະລິດ ພາຍຫລັງຫາຍວິກົນຈະລິດແລ້ວອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້ ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໑໐)

ພິກຂຸ ໔ ອົງ ຕ້ອງອາບັດສັງຄາທິເສດ ເມື່ອພິກຂຸກຳລັງຍົກພຣະປາຕິໂມກຂຶ້ນສະແດງຢູ່ ພິກຂຸເຫຼົ່ານັ້ນກ່າວແນວນີ້ວ່າ "ຂ້າພະເຈົ້າທັງຫຼາຍຫາກໍຮູ້ດຽວນີ້ເອງວ່າ "ໄດ້ຍິນວ່າ ທຳແມ່ນນີ້ມາໃນສູດ ນັບເນື່ອງໃນສູດ ມາສູ່ອຸດເທດທຸກເຄິ່ງເດືອນ" ພິກຂຸເຫຼົ່ານັ້ນມີຄວາມເຫັນໃນອາບັດສັງຄາທິເສດວ່າເປັນອາບັດສັງຄາທິເສດ ອົງໜຶ່ງປິດໄວ້ ອົງໜຶ່ງບໍ່ໄດ້ປິດໄວ້ ອົງໃດປິດໄວ້

ສົງເພິ່ງໃຫ້ອົງນັ້ນສະແດງອາບັດທຸກກົດ ແລະເພິ່ງໃຫ້ປະຣິວາດໃນກອງອາບັດຕາມທີ່ປິດໄວ້ແກ່ອົງທີ່ປິດນັ້ນ ແລ້ວໃຫ້ມານັດແກ່ພິກຂຸທັງ ໔ ອົງ (໑໑)

**ເທວະພິກຂຸວານເອກາທະສະກະ ຈົບ**

# ໗. ມູລາຍະອະວິສຸດທິນະວະກະ

## ວ່າດ້ວຍຄວາມບໍ່ບໍລິສຸດຈາກອາບັດເດີມ ໗ ກໍລະນີ

[໑໗໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ທ່ານກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງດ້ວຍກຳທີ່ຊອບທຳ ບໍ່ກຳເຮີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ບໍລິສຸດຈາກອາບັດເຫຼົ່ານັ້ນ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຮີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ບໍລິສຸດຈາກອາບັດເຫຼົ່ານັ້ນ (໒)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຮີບ ຄວນແກ່ຖານະ ໃຫ້ສະໂມທານະ

ປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາບັດເຫຼົ່ານັ້ນ (໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ບໍ່ໄດ້ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ

ເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາບັດເຫຼົ່ານັ້ນ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາບັດເຫຼົ່ານັ້ນ (໕)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາບັດເຫຼົ່ານັ້ນ (໖)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກໍານົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ບໍ່ໄດ້ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາ ບັດເຫຼົ່ານັ້ນ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກໍານົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ບໍ່ໄດ້ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາ ບັດເຫຼົ່ານັ້ນ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກໍານົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍບໍ່ຊອບທຳ ອັບພານໂດຍບໍ່ຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນຍັງບໍ່ມົດຈົດຈາກອາບັດເຫຼົ່ານັ້ນ (໙)

**ມູລາຍະອະວິສຸດທິນະວະກະ ຈົບ**

# ໑໐. ມູລາຍະວິສຸດທິນະວະກະ

## ວ່າດ້ວຍຄວາມນົດຈົດຈາກອາບັດເດີມ ໗ ກໍລະນີ

[໑໗໓] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ທ່ານກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປົດໄວ້ ຯລຯ ມີຈຳນວນນັບໄດ້ ປົດໄວ້ ຯລຯ ມີຈຳນວນນັບໄດ້ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນນົດຈົດແລ້ວຈາກອາບັດເຫຼົ່ານັ້ນ (໑-໓)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບບໍ່ໄດ້ ບໍ່ໄດ້ປົດໄວ້ ຯລຯ ມີຈຳນວນນັບບໍ່ໄດ້ ປົດໄວ້ ຯລຯ ມີຈຳນວນນັບບໍ່ໄດ້ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນນົດຈົດແລ້ວຈາກອາບັດເຫຼົ່ານັ້ນ (໔)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ບໍ່ໄດ້ປົດໄວ້ ຯລຯ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປົດໄວ້ ຯລຯ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າ

ຫາອາບັດເດີມເພື່ອອາບັດໃນລະຫວ່າງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ

ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈົດແລ້ວຈາກອາບັດເຫຼົ່ານັ້ນ (ກ-ຝ)

**ມູລາຍະວິສຸດທິນະວະກະ ຈົບ**

## ໑໑. ຕະຕິຍະນະວະກະ

## ວ່າດ້ວຍຄວາມມົດຈົດຈາກອາບັດໂດຍຂັ້ນຕອນທີ ໓ ລວມ ໙ ກໍລະນີ

[໑໗໔] ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸ ຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອອາບັດໃນລະ ຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ

ພິກຂຸນັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ພິກຂຸນັ້ນຕັ້ງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້

ພິກຂຸນັ້ນຄິດແນວນີ້ວ່າ "ເຮົາແລຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ເຮົານັ້ນຂໍສະໂມທານະປະຣິວາດເພື່ອອາບັດເຫຼົ່ານັ້ນກັບສົງ ສົງໄດ້ໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນ ແກ່ເຮົານັ້ນ ເຮົານັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງເຮົານັ້ນເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໄດ້ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ ເຮົານັ້ນສຳຄັນວ່າ "ເຮົາຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ບໍ່ໄດ້ປິດໄວ້ ເຮົານັ້ນຕັ້ງຢູ່ໃນພູມນັ້ນ

ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້ ແນວໃດສາ ເຮົາເພິ່ງຂໍການດຶງເຂົ້າຫາອາບັດເດີມເພື່ອອາບັດໃນລະຫວ່າງບັນດາ

ອາບັດໂຕກ່ອນແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ເພິ່ງຂໍປະຣິວາດໂດຍຊອບທຳ ເພິ່ງຂໍມານັດໂດຍຊອບທຳ ເພິ່ງຂໍອັບພານໂດຍຊອບທຳກັບສົງ" ດັ່ງນີ້

ພິກຂຸນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ຂໍສະໂມທານະປະຣິວາດໂດຍຊອບທຳ ຂໍມານັດໂດຍຊອບທຳ ຂໍອັບພານໂດຍຊອບທຳກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນພົ້ນຈິດແລ້ວຈາກອາບັດເຫຼົ່ານັ້ນ (໑)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ທ່ານກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ປົດໄວ້ ພິກຂຸອຸທາຍີນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ

ພິກຂຸນັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ປົດໄວ້ ພິກຂຸນັ້ນຕັ້ງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້

ພິກຂຸນັ້ນຄິດແນວນີ້ວ່າ "ເຮົາແລຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ຯລຯ ກຳນົດໄດ້ແດ່ ກະຈາຍໄປແດ່ ເຮົານັ້ນໄດ້ຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນ ກັບສົງ ສົງໄດ້ໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ເຮົານັ້ນ ເຮົານັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງເຮົານັ້ນເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໄດ້ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ ເຮົານັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ປົດໄວ້ ເຮົານັ້ນຕ້ອງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້ ແນວໃດ

ສາ ເຮົາເພິ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ເພິ່ງຂໍສະໂມທານະປະຣິວາດໂດຍຊອບທຳ ເພິ່ງຂໍມານັດໂດຍຊອບທຳ ເພິ່ງຂໍອັບພານໂດຍຊອບທຳກັບສົງ" ດັ່ງນີ້

ພິກຂຸນັ້ນຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ຂໍສະໂມທານະປະຣິວາດໂດຍຊອບທຳ ຂໍມານັດໂດຍຊອບທຳ ຂໍອັບພານໂດຍຊອບທຳກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈິດແລ້ວຈາກອາບັດເຫຼົ່ານັ້ນ (໘)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸ ຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ ໄດ້ປົດໄວ້ແດ່ ບໍ່ໄດ້ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມເພື່ອ ອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣີບ ບໍ່ຄວນແກ່ຖານະໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ ທ່ານສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ฯລฯ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈິດແລ້ວຈາກອາບັດເຫຼົ່ານັ້ນ (໙)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ฯລฯ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບບໍ່ໄດ້ບໍ່ໄດ້ປົດໄວ້ ฯລฯ ມີຈຳນວນນັບບໍ່ໄດ້ ປົດໄວ້ ฯລฯ ມີຈຳນວນນັບບໍ່ໄດ້ ປົດໄວ້ແດ່ ບໍ່ໄດ້ປົດໄວ້ແດ່ ฯລฯ ມີຈຳນວນນັບໄດ້ແດ່ ມີຈຳນວນ ນັບບໍ່ໄດ້ແດ່ ບໍ່ໄດ້ປົດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງດ້ວຍກຳອັນບໍ່ຊອບທຳ ກຳເຣີບ ບໍ່ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳທ່ານສຳຄັນວ່າ ເຮົາກຳລັງຢູ່ປະຣິວາດ ฯລฯ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດ

ໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈິດແລ້ວຈາກອາບັດເຫຼົ່ານັ້ນ (໔-໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ໆລໆ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານ ພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ

ພິກຂຸນັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ ພິກຂຸນັ້ນຕັ້ງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້

ພິກຂຸນັ້ນຄິດແນວນີ້ວ່າ "ເຮົາແລຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ໆລໆ ກຳນົດໄດ້ແດ່ ກະຈາຍໄປແດ່ ເຮົານັ້ນໄດ້ຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໄດ້ໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ເຮົານັ້ນ ເຮົານັ້ນ ກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງເຮົານັ້ນເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣິບ ບໍ່ຄວນແກ່ຖານະ ໄດ້ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ ເຮົານັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ ເຮົານັ້ນຕ້ອງຢູ່ໃນພູມນັ້ນຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້ ແນວໃດສາ ເຮົາເພິ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ເພິ່ງຂໍສະໂມທານະປະຣິວາດໂດຍຊອບທຳ ເພິ່ງຂໍມານັດໂດຍຊອບທຳ ເພິ່ງຂໍອັບພານໂດຍຊອບທຳກັບສົງ" ດັ່ງນີ້

ພິກຂຸນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣິບ ຄວນແກ່ຖານະ ຂໍສະໂມທານະປະຣິວາດໂດຍຊອບທຳ ຂໍມານັດໂດຍຊອບທຳ ຂໍອັບພານໂດຍຊອບທຳກັບສົງ

ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈິດແລ້ວຈາກອາບັດເຫຼົ່ານັ້ນ (໗)

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸ ຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ໗ລ໗ ກຳນົດໄດ້ແດ່ ກະຈາຍໄປແດ່ ທ່ານຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ທ່ານພິກຂຸອຸທາຍີນັ້ນກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣີບ ບໍ່ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ

ພິກຂຸນັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ພິກຂຸນັ້ນຕັ້ງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້

ພິກຂຸນັ້ນ ຄິດແນວນີ້ວ່າ "ເຮົາແລຕ້ອງອາບັດສັງຄາທິເສດຫຼາຍໂຕ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ມີຊື່ແນວດຽວກັນແດ່ ມີຊື່ຕ່າງກັນແດ່ ເປັນສະພາຄະກັນແດ່ ບໍ່ເປັນສະພາຄະກັນແດ່ ກຳນົດໄດ້ແດ່ ກະຈາຍໄປແດ່ ເຮົານັ້ນໄດ້ຂໍສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນກັບສົງ ສົງໄດ້ໃຫ້ສະໂມທານະປະຣິວາດ ເພື່ອອາບັດເຫຼົ່ານັ້ນແກ່ເຮົານັ້ນ ເຮົານັ້ນ ກຳລັງຢູ່ປະຣິວາດ ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງກັບສົງ ສົງດຶງເຮົານັ້ນເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງ ດ້ວຍກຳອັນບໍ່ຊອບທຳ ກຳເຣີບ ບໍ່ຄວນແກ່ຖານະ ໄດ້ໃຫ້ສະໂມທານະປະຣິວາດໂດຍບໍ່ຊອບທຳ ເຮົານັ້ນສຳຄັນວ່າ "ເຮົາກຳລັງຢູ່ປະຣິວາດ" ຕ້ອງອາບັດສັງຄາທິເສດຫຼາຍໂຕໃນລະຫວ່າງ ມີຈຳນວນນັບໄດ້ແດ່ ມີຈຳນວນນັບບໍ່ໄດ້ແດ່ ປິດໄວ້ແດ່ ບໍ່ໄດ້ປິດໄວ້ແດ່ ເຮົານັ້ນຕ້ອງຢູ່ໃນພູມນັ້ນ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕກ່ອນໄດ້ ຣະນຶກອາບັດໃນລະຫວ່າງບັນດາອາບັດໂຕຫຼັງໄດ້ ແນວໃດສາ ເຮົາເພິ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ເພິ່ງຂໍສະໂມທານະປະຣິວາດໂດຍຊອບທຳ ເພິ່ງຂໍມານັດໂດຍຊອບທຳ ເພິ່ງຂໍອັບພານໂດຍຊອບທຳກັບສົງ" ດັ່ງນີ້

ພິກຂຸນັ້ນຈຶ່ງຂໍການດຶງເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ຂໍສະໂມທານະປະຣິວາດໂດຍຊອບທຳ ຂໍມານັດໂດຍຊອບທຳ ຂໍອັບພານໂດຍຊອບທຳກັບສົງ ສົງດຶງທ່ານເຂົ້າຫາອາບັດເດີມ ເພື່ອອາບັດໃນລະຫວ່າງບັນດາອາບັດໂຕກ່ອນ ແລະເພື່ອອາບັດໃນລະຫວ່າງບັນດາອາບັດໂຕຫຼັງ ດ້ວຍກຳທີ່ຊອບທຳ ບໍ່ກຳເຣີບ ຄວນແກ່ຖານະ ໃຫ້ສະໂມທານະປະຣິວາດໂດຍຊອບທຳ ໃຫ້ມານັດໂດຍຊອບທຳ ອັບພານໂດຍຊອບທຳ ພິກຂຸທັງຫຼາຍ ພິກຂຸນັ້ນມົດຈິດແລ້ວຈາກອາບັດເຫຼົ່ານັ້ນ (໙)

**ຕະຕີຍະນະວະກະ ຈົບ**

**ສະມຸດຈະຍະຂັນທະກະທີ ໓ ຈົບ**

## ລວມສາລະສຳຄັນທີ່ມີໃນສະມຸດຈະຍະຂັນທະກະ

ໝວດວ່າອາບັດບໍ່ໄດ້ປົດໄວ້ ອາບັດປົດໄວ້ ໑ ມື້ ອາບັດປົດໄວ້ ໒ ມື້ ອາບັດປົດໄວ້ ໓ ມື້ ອາບັດປົດໄວ້ ໔ ມື້ ອາບັດປົດໄວ້ ໕ ມື້ ອາບັດປົດໄວ້ ໑໐ ມື້ເປັນຕົ້ນ ອາບັດປົດໄວ້ຫຼາຍເດືອນ ມະຫາສຸດທັນຕະປະຣິວາດເພື່ອອາບັດທັງຫຼາຍ ພິກຂຸສິກ ອາບັດມີຈຳນວນນັບໄດ້ ພິກຂຸ ໒ ອົງ ມີຄວາມສົງໄສ ມີຄວາມເຫັນວ່າປົນກັນ ມີຄວາມເຫັນວ່າປົນແລະບໍ່ປົນກັນ ມີຄວາມເຫັນໃນກອງອາບັດບໍ່ລ້ວນຫງວ ແລະມີຄວາມເຫັນວ່າເຊັ່ນນັ້ນຄືກັນ ອົງໜຶ່ງປົດ ອົງໜຶ່ງບໍ່ປົດ ພິກຂຸຫຼີກໄປ ວິກົນຈະລິດ ກຳລັງສະແດງພຣະປາຕິໂມກ ຄວາມມົດຈິດແລະບໍ່ມົດຈິດ ໃນການດຶງເຂົ້າຫາອາບັດເດີມ ໑໗ ຢ່າງ ນີ້ເປັນນິພົນຂອງພວກອາຈານຜູ້ຢູ່ໃນມະຫາວິຫານ ຜູ້ຈຳແນກບົດ ຜູ້ຍັງຊາວເກາະຕາມພະປັນນິໃຫ້ເຫຼື້ອມໃສແຕ່ງໄວ້ ເພື່ອຄວາມໝັ້ນຄົງແຫ່ງພຣະສັດທຳ

**ມານັດ ໑໐໐ ຈົບ**

**ສະມຸດຈະຍະຂັນທະກະ ຈົບ**

# ໔. ສະມະຖະຂັນທະກະ

## ໑. ສຳມຸຂາວິໄນ

## ວ່າດ້ວຍລະງັບອະທິກອນໃນບ່ອນພ້ອມໜ້າ

### ເລື້ອງພຣະສັບພັກຄີ

[໑໗໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພວກພິກຂຸສັບພັກຄີລົງຕັດຊນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່ ແກ່ພິກຂຸທັງຫຼາຍຜູ້ບໍ່ໄດ້ຢູ່ຕໍ່ໜ້າ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໄດ້ລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່ ແກ່ພິກຂຸທັງຫຼາຍຜູ້ບໍ່ໄດ້ຢູ່ຕໍ່ໜ້ານໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງສອບຖາມ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸສັບພັກຄີລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່ ແກ່ພິກຂຸທັງຫຼາຍຜູ້ບໍ່ໄດ້ຢູ່ຕໍ່ໜ້າ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນ ບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງໄດ້ລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່ ແກ່ພິກຂຸທັງຫຼາຍຜູ້ບໍ່ໄດ້ຢູ່ຕໍ່ໜ້ານໍ ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນນັ້ນ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຕັດຊະນີຍະກຳກໍດີ ນິຍະສະກຳກໍດີ ປັບພາຊະນີຍະກຳກໍດີ ປະຕິສາຣະນີຍະ

ກໍາກໍດີ ອຸກເຂປະນີຍະກໍາກໍດີ ພິກຂຸບໍ່ເພິ່ງລົງແກ່ພິກຂຸທັງຫຼາຍຜູ້ບໍ່ໄດ້ຢູ່ຕໍ່ໜ້າ ອົງໃດລົງ ຕ້ອງອາບັດທຸກກົດ”

## ທໍາມະວາທີແລະອະທໍາມະວາທີ

[໑໗໖] ອະທໍາມະວາທີບຸກຄົນ ອະທໍາມະວາທີພິກຂຸຫຼາຍອົງ ອະທໍາມະວາທີສົງ ທໍາມະວາທີບຸກຄົນ ທໍາມະວາທີພິກຂຸຫຼາຍອົງ ທໍາມະວາທີສົງ

## ກັນທະປັກຂະນະວະກະ

## ວ່າດ້ວຍທໍາຝ່າຍດໍາ ໗ ຢ່າງ

## ສໍາມຸຂາວິໄນປະຕິຣູປະ

[໑໗໗] ອະທໍາມະວາທີບຸກຄົນ ຍັງທໍາມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນໍາວ່າ “ນີ້ທໍາ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້” ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທໍາ ເປັນສໍາມຸຂາວິໄນປະຕິຣູປະ (໑)

ອະທໍາມະວາທີບຸກຄົນ ຍັງທໍາມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນໍາວ່າ “ນີ້ທໍາ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້” ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທໍາ ເປັນສໍາມຸຂາວິໄນປະຕິຣູປະ (໒)

ອະທໍາມະວາທີບຸກຄົນ ຍັງທໍາມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນໍາວ່າ “ນີ້ທໍາ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈ ຂໍ້ນີ້” ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທໍາ ເປັນສໍາມຸຂາວິໄນປະຕິຣູປະ (໓)

ອະທໍາມະວາທີພິກຂຸຫຼາຍອົງ ຍັງທໍາມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນໍາວ່າ “ນີ້ທໍາ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້” ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທໍາ ເປັນສໍາມຸຂາວິໄນປະຕິຣູປະ (໔)

ອະທໍາມະວາທີພິກຂຸຫຼາຍອົງ ຍັງທໍາມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນໍາວ່າ “ນີ້ທໍາ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານ ຈົ່ງຖືເອົາ

ຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທຳ ເປັນສຳມຸຂາວິໄນປະຕິຣູປະ (໕)

ອະທຳມະວາທີພິກຂຸຫຼາຍອົງ ຍັງທຳມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທຳ ເປັນສຳມຸຂາວິໄນປະຕິຣູປະ (໖)

ອະທຳມະວາທີສົງ ຍັງທຳມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທຳ ເປັນສຳມຸຂາວິໄນປະຕິຣູປະ (໗)

ອະທຳມະວາທີສົງ ຍັງທຳມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທຳ ເປັນສຳມຸຂາວິໄນປະຕິຣູປະ (໘)

ອະທຳມະວາທີສົງ ຍັງອະທຳມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍບໍ່ຊອບທຳ ເປັນສຳມຸຂາວິໄນປະຕິຣູປະ (໙)

**ກັນຫະປັກຂະນະວະກະ ຈົບ**

## ສຸກກະປັກຂະນະວະກະ

## ວ່າດ້ວຍທຳຝ່າຍຂາວ ໙ ຢ່າງ

## ສຳມຸຂາວິໄນໂດຍທຳ

[໑໘໘] ທຳມະວາທີບຸກຄົນ ຍັງອະທຳມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໑)

ທຳມະວາທີບຸກຄົນ ຍັງອະທຳມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໒)

ທຳມະວາທີບຸກຄົນ ຍັງອະທຳມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໓)

ທຳມະວາທີພິກຂຸຫຼາຍອົງ ຍັງອະທຳມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໔)

ທຳມະວາທີພິກຂຸຫຼາຍອົງ ຍັງອະທຳມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໕)

ທຳມະວາທີພິກຂຸຫຼາຍອົງ ຍັງອະທຳມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໖)

ທຳມະວາທີສົງ ຍັງອະທຳມະວາທີບຸກຄົນໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໗)

ທຳມະວາທີສົງ ຍັງອະທຳມະວາທີພິກຂຸຫຼາຍອົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໘)

ທຳມະວາທີສົງ ຍັງອະທຳມະວາທີສົງໃຫ້ຍິນຍອມ ໃຫ້ພິນິດ ໃຫ້ເພ່ງ ໃຫ້ພິຈາຣະນາ ໃຫ້ສະແດງ ໃຫ້ສະແດງນຳວ່າ "ນີ້ທຳ ນີ້ວິໄນ ນີ້ສັດຖຸສາດ ພວກທ່ານຈົ່ງຖືເອົາຂໍ້ນີ້ ຈົ່ງພໍໃຈຂໍ້ນີ້" ຖ້າອະທິກອນນັ້ນລະງັບແນວນີ້ ຊື່ວ່າລະງັບໂດຍທຳ ເປັນສຳມຸຂາວິໄນ (໙)

**ສຸກກະປັກຂະນະວະກະ ຈົບ**

**ສຳມຸຂາວິໄນ ຈົບ**

# ໔. ສະຕິວິໄນ

## ວ່າດ້ວຍລະງັບອະທິກອນໂດຍປະກາດສົມມຸດໃຫ້ວ່າເປັນຜູ້ມີສະຕິສົມບູນ

### ເລື້ອງພຣະທັບພະມັນລະບຸດ

[໑໗໙] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄື ຄັ້ງນັ້ນແລ ທ່ານພຣະທັບພະມັນລະບຸດ ໄດ້ບັນລຸພຣະອະຣະຫັດຕະຜົນ ເມື່ອອາຍຸ ໗ ຂວບ ນັບແຕ່ເກີດ ຄຸນວິເສດແນວໃດແນວໜຶ່ງທີ່ພຣະສາວົກຈະເພິ່ງບັນລຸ ທ່ານກໍໄດ້ບັນລຸແລ້ວທັງໝົດ ອັນໜຶ່ງ ທ່ານບໍ່ມີກິດອັນໃດ ໆ ທີ່ຈະເພິ່ງເຮັດຍິ່ງກວ່ານີ້ ຫຼືກິດທີ່ເຮັດສຳເລັດແລ້ວ ເຊິ່ງຈະເຮັດເພີ່ມເຕີມອີກກໍບໍ່ມີ

ຕໍ່ມາ ທ່ານພຣະທັບພະມັນລະບຸດຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຄຳນຶງແນວນີ້ວ່າ "ເຮົາໄດ້ບັນລຸອະຣະຫັດຕະຜົນເມື່ອອາຍຸ ໗ ຂວບ ນັບແຕ່ເກີດ ຄຸນວິເສດແນວໃດແນວໜຶ່ງ ທີ່ພຣະສາວົກເພິ່ງບັນລຸ ເຮົາກໍໄດ້ບັນລຸແລ້ວທັງໝົດ ບໍ່ມີກິດອັນໃດ ໆ ທີ່ຈະເພິ່ງເຮັດຍິ່ງກວ່ານີ້ ຫຼືກິດທີ່ເຮັດສຳເລັດແລ້ວເຊິ່ງຈະເຮັດເພີ່ມເຕີມອີກກໍບໍ່ມີ ເຮົາຄວນຊ່ອຍອັນໃດສົງໄດ້ແດ່"

ລຳດັບນັ້ນ ທ່ານພຣະທັບພະມັນລະບຸດຕຶກລຶງໃຈວ່າ "ຖ້າຈັ່ງໃດ ເຮົາຄວນຈັດແຈງເສນາສະນະ ແລະແຈກພັດຕາຫານແກ່ສົງ" ເມື່ອອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະ ພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດ ມີຄວາມຄິດແນວນີ້ວ່າ ເຮົາໄດ້ບັນລຸອະຣະຫັດຕະຜົນເມື່ອອາຍຸ ໗ ຂວບ ນັບແຕ່ເກີດ ຄຸນວິເສດແນວໃດແນວໜຶ່ງ ເຮົາກໍໄດ້ບັນລຸແລ້ວທັງໝົດ ບໍ່ມີກິດອັນໃດ ໆ ທີ່ຈະເພິ່ງເຮັດຍິ່ງໄປກວ່ານີ້ ຫຼື ກິດທີ່ເຮັດສຳເລັດແລ້ວເຊິ່ງຈະເຮັດເພີ່ມເຕີມອີກກໍບໍ່ມີ ເຮົາຄວນຊ່ອຍອັນໃດສົງໄດ້ແດ່ ຂ້ານ້ອຍ ຖ້າຈັ່ງໃດ ຂ້າພຣະອົງເພິ່ງຈັດແຈງເສນາສະນະແລະແຈກ ພັດຕາຫານແກ່ສົງ ຂ້າພຣະອົງປາຖະໜາຈະຈັດແຈງເສນາສະນະແລະແຈກພັດຕາຫານແກ່ສົງ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ທັບພະ ຖ້າເປັນແນວນັ້ນ ທ່ານຈົ່ງຈັດແຈງເສນາສະນະແລະແຈກພັດຕາຫານແກ່ສົງ" ພຣະທັບພະມັນລະບຸດທູນຮັບສະໜອງພຣະພຸດທະດຳຣັດແລ້ວ

## ແຕ່ງຕັ້ງເສນາສະນະປັນຍາປະກະແລະພັດຕຸດເທສະກະ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງແຕ່ງຕັ້ງທັບພະມັນລະບຸດໃຫ້ເປັນເສນາສະນະປັນຍາປະກະແລະພັດຕຸດເທສະກະ

## ວິທີແຕ່ງຕັ້ງແລະກຳມະວາຈາແຕ່ງຕັ້ງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ເບື້ອງຕົ້ນເພິ່ງຂໍໃຫ້ທັບພະມັນລະບຸດຮັບ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໑໙໐] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງທ່ານພຣະທັບພະມັນລະບຸດ ໃຫ້ເປັນເສນາສະນະປັນຍາປະກະແລະພັດຕຸດເທສະກະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພຣະທັບພະມັນລະບຸດໃຫ້ເປັນເສນາສະນະປັນຍາປະກະແລະພັດຕຸດເທສະກະ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງທ່ານພຣະທັບພະມັນລະບຸດ ໃຫ້ເປັນເສນາສະນະປັນຍາປະກະແລະພັດຕຸດເທສະກະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ທ່ານພຣະທັບພະມັນລະບຸດ ສົງແຕ່ງຕັ້ງໃຫ້ເປັນເສນາສະນະປັນຍາປະກະແລະພັດຕຸດເທສະກະແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໑໙໑] ເມື່ອທ່ານພຣະທັບພະມັນລະບຸດ ໄດ້ຮັບແຕ່ງຕັ້ງແລ້ວ ຍ່ອມຈັດແຈງເສນາສະນະສຳລັບໝູ່ພິກຂຸຜູ້ມີຄຸນສົມບັດສະເໝີກັນໄວ້ທີ່ດຽວກັນ ດັ່ງນີ້ ຄື ຈັດແຈງເສນາສະນະສຳລັບ ພິກຂຸຜູ້ຊົງພຣະສູດລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ "ພິກຂຸເຫຼົ່ານັ້ນຈັກຊັກຊ້ອມພຣະສູດກັນ"

ຈັດແຈງເສນາສະນະສຳລັບພິກຂຸຜູ້ຊົງພຣະວິໄນລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ "ພິກຂຸເຫຼົ່ານັ້ນຈັກວິນິດໄສພຣະວິໄນກັນ"

ຈັດແຈງເສນາສະນະສຳລັບພິກຂຸຜູ້ຊົງພຣະອະພິທຳລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ "ພິກຂຸເຫຼົ່ານັ້ນຈັກສົນທະນາພຣະອະພິທຳກັນ"

ຈັດແຈງເສນາສະນະສຳລັບພິກຂຸຜູ້ໄດ້ຊານລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ "ພິກຂຸເຫຼົ່ານັ້ນຈັກບໍ່ລົບກວນກັນ"

ຈັດແຈງເສນາສະນະສຳລັບພິກຂຸຜູ້ມັກກ່າວຕິຣັດສານະກະຖາ ຜູ້ຫຼາຍໄປດ້ວຍການບຳລຸງຮ່າງກາຍລວມກັນໄວ້ແຫ່ງໜຶ່ງ ດ້ວຍປະສົງວ່າ "ພິກຂຸເຫຼົ່ານີ້ ຈະຢູ່ຕາມຄວາມພໍໃຈ

ທ່ານພຣະທັບພະມັນລະບຸດນັ້ນເຂົ້າເຕໂຊກະສິນແລ້ວຈັດແຈງເສນາສະນະດ້ວຍແສງສະຫວ່າງນັ້ນສຳລັບພິກຂຸທີ່ມາໃນເວລາຄ່ຳຄືນ

ພິກຂຸທັງຫຼາຍຈົງໃຈມາໃນເວລາຄ່ຳຄືນ ດ້ວຍປະສົງວ່າ "ພວກເຮົາຈະຊົມອິດທິປາຕິຫານຂອງທ່ານພຣະທັບພະມັນລະບຸດ" ກໍມີ ພິກຂຸເຫຼົ່ານັ້ນພາກັນເຂົ້າໄປຫາທ່ານພຣະທັບພະມັນລະບຸດກ່າວວ່າ "ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍ"

ທ່ານພຣະທັບພະມັນລະບຸດກ່າວວ່າ "ທ່ານທັງຫຼາຍຕ້ອງການພັກບ່ອນໃດບໍ ຂ້າພະເຈົ້າຈະຈັດແຈງໃຫ້ຢູ່ໄສ

ພິກຂຸເຫຼົ່ານັ້ນຈົງໃຈອ້າງທີ່ໄກ ໆ ວ່າ "ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ ພູຄິດຊະກູດ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ເຫວສຳລັບຖິ້ມໂຈນ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ກາສິລາຂ້າງພູອິສິຄິລິ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຖ້ຳສັດຕະບັນຄູຫາຂ້າງພູເວພາຣະ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ເງື້ອມສັບປະໂສນະທິກະໃກ້ສີຕະວັນ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຊອກເຂົາໂຄຕະມະກະ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຊອກເຂົາຕິນະຖຸກະ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຊອກເຂົາກະໂປຕະ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຕະໂປທາຣາມ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ຊີວະກຳພະວັນ ທ່ານຈົ່ງຈັດແຈງເສນາສະນະໃຫ້ພວກຂ້ານ້ອຍທີ່ມັດທະກຸດສິມະຣິຄະທາຍະວັນ

ທ່ານພຣະທັບພະມັນລະບຸດເຂົ້າເຕໂຊກະສິນ ໃຊ້ອົງຄຸລີສ່ອງແສງສະຫວ່າງຍ່າງນຳໜ້າພິກຂຸເຫຼົ່ານັ້ນ ພິກຂຸເຫຼົ່ານັ້ນຍ່າງນຳທ່ານພຣະທັບພະມັນລະບຸດໄປດ້ວຍແສງສະຫວ່າງນັ້ນ ທ່ານໄດ້ຈັດແຈງເສນາສະນະສຳລັບພິກຂຸເຫຼົ່ານັ້ນ ຊີ້ແຈ່ງວ່າ "ນີ້ຕຽງ ນີ້ຕັ່ງ ນີ້ຟູກ ນີ້ໝອນ ນີ້ທີ່ຖ່າຍອຸດຈາຣະ ນີ້ທີ່ຖ່າຍປັດສາວະ ນີ້ນ້ຳສັນ ນີ້ນ້ຳໃຊ້ ນີ້ໄມ້ການເທົ້າ ນີ້ລະບຽບກະຕິກາສົງ ຄວນເຂົ້າເວລານີ້ ຄວນອອກເວລານີ້" ເມື່ອຈັດແຈງສຳເລັດແລ້ວ ກັບມາພຣະເວລຸວັນວິຫານຄືເກົ່າ

**ເລື້ອງພຣະທັບພະມັນລະບຸດ ຈົບ**

## ເລື້ອງພຣະເມດຕິຍະແລະພຣະພຸມມະຊະກະ

[໑໗໘] ສະໄໝນັ້ນ ພຣະເມດຕິຍະແລະພຣະພຸມມະຊະກະ ເປັນພຣະບວດໃໝ່ແລະມີບຸນໜ້ອຍ ເສນາສະນະຂອງສົງຊັ້ນບໍ່ດີ ອາຫານກໍຊັ້ນບໍ່ດີຕົກເຖິງທ່ານທັງສອງ ຊາວນະຄອນຣາດ

ຊະຄືຕ້ອງການ ຈະຖວາຍບິນທະບາດແກ່ພຣະເຖຣະທັງຫຼາຍກໍຖວາຍເນີຍໃສແດ່ ນ້ຳມັນແດ່ ແກງອ່ອມແດ່ ທີ່ຈັດປຸງພິເສດ ແຕ່ພວກເຂົາຖວາຍອາຫານທຳມະດາແກ່ພຣະເມດຕິຍະ ແລະ ພຣະພຸມມະຊະກະຕາມ ແຕ່ຈະຫາໄດ້ ຄື ເຂົ້າປຽນກັບນ້ຳສົ້ມຜັກ

ມື້ໜຶ່ງ ທ່ານທັງສອງກັບຈາກບິນທະບາດຫຼັງຈາກສັນສຳເລັດແລ້ວ ທ່ຽວຖາມພິກຂຸຜູ້ເຖຣະທັງຫຼາຍວ່າ "ມີອາຫານອັນໃດແດ່ ໃນໂຮງສັນສຳລັບພວກທ່ານ

ພຣະເຖຣະລາງພວກຕອບວ່າ "ທ່ານທັງສອງ ພວກເຮົາມີເນີຍໃສ ນ້ຳມັນ ແກງອ່ອມ"

ພຣະເມດຕິຍະແລະພຣະພຸມມະຊະກະກ່າວວ່າ "ພວກຂ້ານ້ອຍບໍ່ມີອັນໃດເລີຍ ຂ້ານ້ອຍມີແຕ່ ອາຫານທຳມະດາ ຕາມແຕ່ຈະຫາໄດ້ ຄື ເຂົ້າປຽນກັບນ້ຳສົ້ມຜັກ

ສະໄໝຕໍ່ມາ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີ ຖວາຍອາຫານແກ່ສົງມື້ລະ ໔ ຊຸດ ເປັນນິຕະຍະພັດ ຄະຫະບໍດີພ້ອມບຸດພັນລະຍາອັງຄາດຢູ່ໃກ້ ໆ ໃນໂຮງສັນ ຄົນອື່ນ ໆ ຖາມເຖິງຄວາມຕ້ອງການເຂົ້າສຸກ ຖາມເຖິງຄວາມຕ້ອງການກັບເຂົ້າ ຖາມເຖິງຄວາມຕ້ອງການນ້ຳມັນ ຖາມເຖິງຄວາມຕ້ອງການແກງອ່ອມ

ມື້ຕໍ່ມາ ທ່ານພຣະທັບພະມັນລະບຸດຜູ້ເປັນພັດຕຸດເທສະກະນິມົນພຣະເມດຕິຍະແລະພຣະພຸມມະຊະກະໄປສັນພັດຕາຫານຂອງຄະຫະບໍດີໃນມື້ອື່ນເຊົ້າ ມື້ດຽວກັນນັ້ນ ຄະຫະບໍດີເດີນທາງໄປອາຣາມດ້ວຍທຸລະບາງຢ່າງ ໄດ້ເຂົ້າໄປຫາທ່ານພຣະທັບພະມັນລະບຸດເຖິງສຳນັກ ເມື່ອເຖິງແລ້ວໄດ້ໄຫວ້ທ່ານພຣະທັບພະມັນລະບຸດແລ້ວນັ່ງລົງທີ່ສົມຄວນ ທ່ານພຣະທັບພະມັນລະບຸດຊີ້ແຈ່ງ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ບັດແລ້ວ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີຖາມວ່າ "ພັດຕາຫານທີ່ຈະຖວາຍໃນມື້ອື່ນນີ້ທີ່ເຮືອນຂອງຂ້ານ້ອຍ ທ່ານນິມົນ ພິກຂຸອົງໃດໄປສັນຂ້ານ້ອຍ

ທ່ານພຣະທັບພະມັນລະບຸດຕອບວ່າ "ອາດຕະມາຈັດໃຫ້ພຣະເມດຕິຍະແລະພຣະພຸມມະຊະກະໄປສັນ

ເຂົາບໍ່ພໍໃຈວ່າ "ເປັນຫຍັງຈຶ່ງນິມົນພິກຂຸຊົ່ວໄປສັນພັດຕາຫານໃນເຮືອນເຮົານໍ" ກັບໄປເຮືອນແລ້ວສັ່ງຍິງຮັບໃຊ້ວ່າ "ນາງ ມື້ອື່ນ ເຈົ້າຈົ່ງຈັດອາສະນະໄວ້ທີ່ຊຸ້ມປະຕູແລ້ວເອົາເຂົ້າປຽນກັບນ້ຳສົ້ມຜັກຖວາຍພິກຂຸຜູ້ມາສັນພັດຕາຫານເດີ້

ຍິງຮັບໃຊ້ຮັບຄຳວ່າ "ໄດ້ຂ້ານ້ອຍ"

ມື້ດຽວກັນນັ້ນ ພຣະເມດຕິຍະແລະພຣະພຸມມະຊະກະກ່າວກັນວ່າ "ທ່ານ ເມື່ອວານນີ້ ເຮົາໄດ້ຮັບນິມົນໄປສັນພັດຕາຫານໃນເຮືອນຄະຫະບໍດີ ມື້ອື່ນ ຄະຫະບໍດີຜູ້ມັກຖວາຍອາຫານຢ່າງດີ

ພ້ອມດ້ວຍບຸດພັນລະຍາ ກໍຈັກມາຢືນອັງຄາດເຮົາຢູ່ໃກ້ ໆ ຄົນອື່ນຖາມເຖິງຄວາມຕ້ອງການ ເຂົ້າສຸກ ຖາມເຖິງຄວາມຕ້ອງການກັບເຂົ້າ ຖາມເຖິງຄວາມຕ້ອງການນໍ້າມັນ ຖາມເຖິງຄວາມຕ້ອງການແກງອ່ອມ" ຍ້ອນຄວາມດີໃຈນັ້ນ ພໍຕົກກາງຄືນ ທ່ານທັງສອງຈຶ່ງນອນຫຼັບບໍ່ເຕັມທີ່ ເມື່ອເວລາເຊົ້າ ຄອງອັນຕະຣະວາສົກ ຖືບາດແລະຈີວອນຍ່າງໄປເຖິງນິເວດຂອງຄະຫະບໍດີ

ຍິງຮັບໃຊ້ແນມເຫັນພຣະເມດຕິຍະແລະພຣະພຸມມະຊະກະຍ່າງມາແຕ່ໄກ ຈຶ່ງຈັດອາສະນະໄວ້ ທີ່ຊຸ້ມປະຕູກ່າວນິມົນວ່າ "ພຣະຜູ້ເປັນເຈົ້າ ນິມົນນັ່ງເທີ້ນ ຂ້ານ້ອຍ"

ພຣະເມດຕິຍະແລະພຣະພຸມມະຊະກະຄິດວ່າ "ເຂົາຄົງນິມົນໃຫ້ພວກເຮົານັ່ງຖ້າທີ່ຊຸ້ມປະຕູຈົນກວ່າພັດຕາຫານຈະສໍາເລັດ" ຂະນະນັ້ນຍິງຮັບໃຊ້ນໍາເຂົ້າປຽນກັບນໍ້າສົ້ມຜັກໄປຖວາຍກ່າວວ່າ "ພຣະຜູ້ເປັນເຈົ້າ ນິມົນສັນເທີ້ນ ຂ້ານ້ອຍ

ທ່ານທັງສອງກ່າວວ່າ "ນາງ ພວກອາດຕະມາຮັບນິມົນມາສັນນິຕະຍະພັດ"

ຍິງຮັບໃຊ້ຕອບວ່າ "ຮູ້ຂ້ານ້ອຍວ່າທ່ານເປັນພຣະຮັບນິມົນມາສັນນິຕະຍະພັດ ແຕ່ເມື່ອວານນີ້ ຄະຫະບໍດີສັ່ງໄວ້ວ່າ ນາງ ມື້ອື່ນ ເຈົ້າຈົ່ງຈັດອາສະນະໄວ້ທີ່ຊຸ້ມປະຕູແລ້ວເອົາເຂົ້າປຽນກັບນໍ້າສົ້ມຜັກຖວາຍພິກຂຸຜູ້ມາສັນພັດຕາຫານເດີ້ ນິມົນສັນເທີ້ນ ຂ້ານ້ອຍ"

ພຣະເມດຕິຍະແລະພຣະພຸມມະຊະກະເປີກສາກັນວ່າ "ເມື່ອວານນີ້ເອງ ຄະຫະບໍດີຜູ້ນັກຖວາຍ ອາຫານຢ່າງດີໄປຫາພຣະທັບພະມັນລະບຸດເຖິງອາຮາມ ສົງໄສພວກເຮົາຄົງຖືກພຣະທັບພະມັນລະບຸດທໍາລາຍຕໍ່ໜ້າຄະຫະບໍດີເປັນແນ່" ຍ້ອນຄວາມເສຍໃຈ ທ່ານທັງສອງຈຶ່ງສັນພັດຕາຫານ ບໍ່ໄດ້ສົມໃຈ ເມື່ອກັບຈາກບິນທະບາດຫຼັງຈາກສັນສໍາເລັດແລ້ວ ເຖິງອາຮາມ ເກັບບາດແລະ ຈີວອນແລ້ວໃຊ້ຜ້າສັງຄາຕິຮັດເຂົ່າ ນັ່ງພາຍນອກຊຸ້ມປະຕູອາຮາມ ຊຶງລຶງ ເກີ້ເຂີນ ຄໍຕົກກົ້ມໜ້າ ຈຸກເຈົ່າ ບໍ່ເວົ້າຈາ

## ພິກຂຸນີເມດຕິຍາໃສ່ຄວາມພຣະທັບພະມັນລະບຸດ

ຄັ້ງນັ້ນ ພິກຂຸນີເມດຕິຍາເຂົ້າໄປຫາພຣະເມດຕິຍະແລະພຣະພຸມມະຊະກະເຖິງທີ່ພັກ ເມື່ອເຖິງແລ້ວໄດ້ກ່າວກັບພຣະເມດຕິຍະແລະພຣະພຸມມະຊະກະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍໄຫວ້ ຂ້ານ້ອຍ"

ເມື່ອທ່ານກ່າວແນວນັ້ນ ພຣະເມດຕິຍະແລະພຸມມະຊະກະກໍບໍ່ເວົ້ານໍາ

ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ພິກຂຸນີເມດຕິຍາກ່າວກັບພຣະເມດຕິຍະ ແລະພຣະພຸມມະຊະກະວ່າ "ຂ້ານ້ອຍ"

ໄຫວ້ ຂ້ານ້ອຍ"

ແມ່ນເທື່ອທີ ໓ ພຣະເມດຕິຍະແລະພຣະພຸມມະຊະກະກໍບໍ່ຍອມເວົ້ານຳ

ພິກຂຸນີເມດຕິຍາກ່າວຕໍ່ໄປວ່າ "ຂ້ານ້ອຍເຮັດຜິດແນວໃດຕໍ່ພຣະຜູ້ເປັນເຈົ້າ ເປັນຫຍັງພຣະຜູ້ເປັນເຈົ້າຈຶ່ງບໍ່ຍອມເວົ້າກັບຂ້ານ້ອຍ

ພິກຂຸທັງສອງຕອບວ່າ "ຈິງແນວນັ້ນແລ ນາງ ພວກເຮົາຖືກພຣະທັບພະມັນລະບຸດບຽດບຽນ ທ່ານຍັງເພີກເສີຍຢູ່ໄດ້"

ພິກຂຸນີເມດຕິຍາຖາມວ່າ "ເຮົາຈະຊ່ອຍໄດ້ແນວໃດ ຂ້ານ້ອຍ"

ພິກຂຸທັງສອງຕອບວ່າ "ຖ້າທ່ານເຕັມໃຈຊ່ອຍ ມື້ນີ້ແລພຣະຜູ້ມີພຣະພາກເຈົ້າຕ້ອງໃຫ້ພຣະທັບພະມັນລະບຸດສຶກ"

ພິກຂຸນີເມດຕິຍາຖາມວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍຈະເຮັດແນວໃດ ຈະຊ່ອຍໄດ້ດ້ວຍວິທີໃດ"

ພິກຂຸທັງສອງຕອບວ່າ "ມາເທີ້ນ ນາງ ທ່ານຈົ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ເມື່ອເຖິງແລ້ວ ຈົ່ງຂາບທູນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ເລື້ອງນີ້ ບໍ່ສົມຄວນ ບໍ່ເໝາະສົມ ທິດທີ່ເຄີຍປອດໄພກໍກັບມີໄພ ທິດທີ່ບໍ່ເຄີຍມີສະໜຽດຈັງໄຮກໍກັບມີສະໜຽດຈັງໄຮ ທິດທີ່ບໍ່ເຄີຍມີອຸປັດທະວະກໍກັບມີອຸປັດທະວະ ໃນບ່ອນທີ່ບໍ່ເຄີຍມີລົມກໍກັບມີລົມແຮງ ນ້ຳກໍເບິ່ງເປັນຄືນ້ຳຮ້ອນຂຶ້ນມາ ຂ້ານ້ອຍຖືກພຣະທັບພະມັນລະບຸດຂົ່ມຂືນ

ພິກຂຸນີເມດຕິຍາຮັບຄຳຂອງພຣະເມດຕິຍະແລະພຣະພຸມມະຊະກະແລ້ວຈຶ່ງເຂົ້າໄປເຝົ້າພຣະຜູ້ມີ ພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ທີ່ ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ເລື້ອງນີ້ບໍ່ສົມຄວນ ບໍ່ເໝາະສົມ ທິດທີ່ເຄີຍປອດໄພກໍກັບມີໄພ ທິດທີ່ບໍ່ເຄີຍມີສະໜຽດຈັງໄຮກໍກັບມີສະໜຽດຈັງໄຮ ທິດທີ່ບໍ່ເຄີຍມີອຸປັດທະວະກໍກັບມີອຸປັດທະວະ ໃນບ່ອນທີ່ບໍ່ເຄີຍມີລົມກໍກັບມີລົມແຮງ ນ້ຳກໍເບິ່ງເປັນຄືນ້ຳຮ້ອນຂຶ້ນມາ ຂ້ານ້ອຍຖືກພຣະທັບພະມັນລະບຸດຂົ່ມຂືນ"

## ຊົງປະຊຸມສົງສອບຖາມ

[໑໙໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດຊົງສອບຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈື່ໄດ້ບໍວ່າໄດ້ເຮັດຕາມທີ່ພິກຂຸນີ ນີ້ກ່າວຫາ"

ທ່ານພຣະທັບພະມັນລະບຸດຂາບທູນວ່າ "ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຊາບວ່າຂ້າພຣະອົງເປັນແນວໃດ?"

ແມ່ນເທື່ອທີ ໔ ໆລໆ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະທັບພະມັນລະບຸດວ່າ "ທັບພະ ທ່ານຈື່ໄດ້ບໍວ່າໄດ້ເຮັດຕາມທີ່ພິກຂຸນີນີ້ກ່າວຫາ" ພຣະທັບພະມັນລະບຸດກໍຂາບທູນວ່າ "ຂ້າ ແຕ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຍ່ອມຊົງຊາບວ່າ ຂ້າພຣະອົງເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ທັບພະ ບັນດິດຍ່ອມບໍ່ແກ້ຄຳກ່າວຫາແນວນີ້ ຖ້າທ່ານເຮັດ ກໍຈົ່ງບອກວ່າເຮັດ ຖ້າທ່ານບໍ່ໄດ້ເຮັດ ກໍຈົ່ງບອກວ່າບໍ່ໄດ້ເຮັດ

ພຣະທັບພະມັນລະບຸດຂາບທູນວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຕັ້ງແຕ່ເກີດມາ ຂ້າພຣະອົງ ບໍ່ຮູ້ຈັກການເສບເມຖຸນທຳແມ່ນໃນຄວາມຝັນ ບໍ່ຈຳຕ້ອງກ່າວເຖິງເມື່ອຕອນຕື່ນຢູ່

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າ ເປັນແນວນັ້ນ ທ່ານທັງຫຼາຍຈົ່ງໃຫ້ນາງພິກຂຸນີເມດຕິຍາສິກ ຈົ່ງສອບຖາມພິກຂຸເຫຼົ່ານີ້" ແລ້ວ ສະເດັດຈາກທີ່ປະທັບເຂົ້າພຣະວິຫານ

ຫຼັງຈາກນັ້ນ ພິກຂຸທັງຫຼາຍ ຈຶ່ງໃຫ້ນາງພິກຂຸນີເມດຕິຍາສິກ ແຕ່ພຣະເມດຕິຍະແລະ ພຣະ ພຸມມະຊະກະໄດ້ແຈ້ງພິກຂຸທັງຫຼາຍວ່າ "ທ່ານທັງຫຼາຍຢ່າໃຫ້ນາງພິກຂຸນີເມດຕິຍາສິກເລີຍ ນາງ ບໍ່ມີຄວາມຜິດ ພວກຂ້ານ້ອຍໂກດ ບໍ່ພໍໃຈ ຕ້ອງການໃຫ້ພຣະທັບພະມັນລະບຸດພົ້ນຈາກພົມ ມະຈັນ ຈຶ່ງຊັກຈູງນາງ"

ພິກຂຸທັງຫຼາຍກ່າວວ່າ "ທ່ານທັງຫຼາຍ ພວກທ່ານໃສ່ຄວາມພຣະທັບພະມັນລະບຸດ ດ້ວຍສີ ລະວິບັດທີ່ບໍ່ມີມູນບໍ

ບັນດາພິກຂຸຜູ້ມັກໜ້ອຍພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະເມດຕິຍະ ແລະພຣະພຸມມະຊະກະຈຶ່ງໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍດ້ວຍສີລະວິບັດທີ່ບໍ່ມີມູນນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນແດ່ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງສອບຖາມ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸ ເມດຕິຍະແລະພິກຂຸພຸມມະຊະກະໃສ່ຄວາມທັບພະມັນລະບຸດດ້ວຍສີລະວິບັດທີ່ບໍ່ມີມູນ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ" ຯລຯ

ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸ ທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ສະຕິວິໄນແກ່ທັບພະມັນລະບຸດຜູ້ເຖິງຄວາມໄພບູນແຫ່ງ ສະຕິແລ້ວ

# ວິທີໃຫ້ສະຕິວິໄນແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສະຕິວິໄນແບບນີ້ ຄື ພິກຂຸທັບພະມັນລະບຸດນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຍໍ້ ປະນົມມືກ່າວແບບນີ້ວ່າ "ທ່ານຜູ້ຈະເລີນ ພິກຂຸເມດຕິຍະແລະພິກຂຸພຸມມະຊະກະ ເຫຼົ່ານີ້ ໃສ່ຄວາມຂ້ານ້ອຍດ້ວຍສີລະວິບັດທີ່ບໍ່ມີມູນ ຂ້ານ້ອຍນັ້ນເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ฯລฯ

ເພິ່ງຂໍແມ່ນເທື່ອທີ ໓ ວ່າ "ທ່ານຜູ້ຈະເລີນ ພິກຂຸເມດຕິຍະແລະພິກຂຸພຸມມະຊະກະເຫຼົ່ານີ້ໃສ່ ຄວາມຂ້ານ້ອຍດ້ວຍສີລະວິບັດທີ່ບໍ່ມີມູນ ຂ້ານ້ອຍນັ້ນເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນ ກັບສົງ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໘໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເມດຕິຍະແລະພິກຂຸພຸມມະຊະກະເຫຼົ່ານີ້ໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານພຣະທັບພະມັນລະບຸດເປັນຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ສະຕິວິໄນແກ່ທ່ານພຣະທັບພະມັນລະບຸດຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເມດຕິຍະແລະພິກຂຸພຸມມະຊະກະເຫຼົ່ານີ້ ໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານພຣະທັບພະມັນລະບຸດເປັນຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ ສົງໃຫ້ສະຕິວິໄນແກ່ທ່ານພຣະທັບພະມັນລະບຸດຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ສະຕິວິໄນແກ່ທ່ານພຣະທັບພະມັນລະບຸດຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸເມດຕິຍະແລະພິກຂຸພຸມມະຊະກະເຫຼົ່ານີ້ ໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານພຣະທັບພະມັນລະບຸດເປັນຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ ສົງໃຫ້ສະຕິວິໄນແກ່ທ່ານພຣະທັບພະມັນລະບຸດ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ສະຕິວິໄນແກ່ທ່ານພຣະທັບພະມັນລະບຸດ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສະຕິວິໄນ ສົງໃຫ້ແລ້ວແກ່ທ່ານພຣະທັບພະມັນລະບຸດ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ການໃຫ້ສະຕິວິໄນທີ່ຊອບທຳ ໕ ຢ່າງ

[໑໙໕] ພິກຂຸທັງຫຼາຍ ການໃຫ້ສະຕິວິໄນທີ່ຊອບທຳມີ ໕ ຢ່າງນີ້ ຄື

໑. ພິກຂຸເປັນຜູ້ບໍລິສຸດ ບໍ່ຕ້ອງອາບັດ
໒. ຜູ້ອື່ນໂຈດພິກຂຸນັ້ນ
໓. ພິກຂຸນັ້ນຂໍ
໔. ສົງໃຫ້ສະຕິວິໄນແກ່ພິກຂຸນັ້ນ
໕. ສົງພ້ອມພຽງກັນໂດຍທຳໃຫ້

ພິກຂຸທັງຫຼາຍ ການໃຫ້ສະຕິວິໄນທີ່ຊອບທຳມີ ໕ ຢ່າງນີ້ແລ

**ສະຕິວິໄນ ຈົບ**

# ໓. ອະມູລະຫະວິໄນ

# ວ່າດ້ວຍລະງັບອະທິກອນໂດຍຍົກປະໂຫຍດໃຫ້ວ່າຕ້ອງອາບັດໃນຂະນະເປັນບ້າ

## ເລື້ອງພຣະຄັກຄະ

[໑໙໖] ສະໄໝນັ້ນ ພຣະຄັກຄະວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດພຣະຄັກຄະດ້ວຍອາບັດທີ່ທ່ານຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດເປັນອາຈິນວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງລະນຶກອາບັດເຫັນປານນີ້"

ທ່ານພຣະຄັກຄະກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍລະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ"

ພິກຂຸທັງຫຼາຍ ແມ່ນທ່ານພຣະຄັກຄະກ່າວຢູ່ແນວນັ້ນ ກໍຍັງໂຈດທ່ານຢູ່ນັ້ນເອງວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງລະນຶກອາບັດເຫັນປານນີ້"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງໄດ້ໂຈດທ່ານພຣະຄັກຄະ ດ້ວຍອາບັດທີ່ທ່ານຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດເປັນອາ ຈິນວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານ ພຣະຄັກຄະກ່າວແນວນີ້ວ່າ ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ຄວນແກ່ສະມະນະເປັນອາຈິນຫຼວງຫຼາຍທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງ ໄດ້ເຮັດສິ່ງນີ້ແລ້ວ ພິກຂຸທັງຫຼາຍແມ່ນທ່ານກ່າວຢູ່ແນວນັ້ນ ກໍຍັງໂຈດທ່ານຢູ່ນັ້ນເອງວ່າທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ແລ້ວນຳເລື້ອງນີ້ໄປຂາບ ທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸທັງຫຼາຍໂຈດພິກຂຸຄັກຄະ ຯລຯ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງໃຫ້ອະມູລະຫະວິໄນແກ່ພິກຂຸຄັກຄະຜູ້ຫາຍວິກົນຈະລິດແລ້ວ

## ວິທີໃຫ້ອະມູລະຫະວິໄນແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ອະມູລະຫະວິໄນແນວນີ້ ຄື ພິກຂຸຄັກຄະນັ້ນເພິ່ງເຂົ້າໄປຫາສົງທີ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຍ່ອງຍໍ້ປະນົມມື ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດຂ້ານ້ອຍດ້ວຍອາບັດທີ່ຂ້ານ້ອຍຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍວ່າທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ຂ້ານ້ອຍກ່າວກັບພິກຂຸເຫຼົ່ານັ້ນແນວນີ້ວ່າທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ ພິກຂຸທັງຫຼາຍແມ່ນຂ້ານ້ອຍກ່າວຢູ່ແນວນີ້ ກໍຍັງໂຈດຂ້ານ້ອຍຢູ່ນັ້ນເອງວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນຫາຍຫຼົງແລ້ວ ຂໍອະມູລະຫະວິໄນກັບສົງ

ເພິ່ງຂໍແມ່ນເທື່ອທີ ໔ ໆລໆ

ເພິ່ງຂໍແມ່ນເທື່ອທີ ໑ ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດຂ້ານ້ອຍດ້ວຍອາບັດທີ່ຂ້ານ້ອຍຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍແລ້ວວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ຂ້ານ້ອຍກ່າວກັບພິກຂຸເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ ພິກຂຸທັງຫຼາຍແມ່ນຂ້ານ້ອຍກ່າວຢູ່ແນວນີ້ ກໍຍັງໂຈດຂ້ານ້ອຍຢູ່ຄືເກົ່າວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານຜູ້ຈະເລີນ ຂ້ານ້ອຍນັ້ນຫາຍວິກົນຈະລິດແລ້ວ ຂໍອະມູລະຫະວິໄນກັບສົງ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໑໙໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຄັກຄະນີ້ວິກົນຈະລິດ ມີຈິດປັ່ນປ່ວນ ທ່ານວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດ ພິກຂຸຄັກຄະດ້ວຍອາບັດທີ່ທ່ານຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ ພິກຂຸທັງຫຼາຍແມ່ນທ່ານກ່າວຢູ່ແນວນີ້ ກໍຍັງໂຈດທ່ານຢູ່ຄືເກົ່າວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານຫາຍວິກົນຈະຣິດແລ້ວຂໍອະມູລະຫະວິໄນກັບສົງ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ອະມູລະຫະວິໄນແກ່ພິກຂຸຄັກຄະ ຜູ້ຫາຍວິກົນຈະລິດແລ້ວ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຄັກຄະນີ້ວິກົນຈະລິດ ມີຈິດປັ່ນປ່ວນ ທ່ານວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດພິກຂຸຄັກຄະ ດ້ວຍອາບັດທີ່ທ່ານຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະ ເປັນອາຈິນຫຼວງຫຼາຍວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນສາແລ້ວ ຂ້ານ້ອຍນັ້ນວິກົນຈະຣິດ ມີຈິດປັ່ນປ່ວນ

ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ ພິກຂຸທັງຫຼາຍແມ່ນທ່ານກ່າວຢູ່ແນວນັ້ນ ກໍຍັງໂຈດທ່ານຢູ່ແນວນີ້ວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານຫາຍວິກົນຈະລິດແລ້ວ ຂໍອະມູລະຫະວິໄນກັບສົງ ສົງໃຫ້ອະມູລະຫະວິໄນແກ່ພິກຂຸຄັກຄະຜູ້ຫາຍວິກົນຈະລິດແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ອະມູລະຫະວິໄນແກ່ພິກຂຸຄັກຄະຜູ້ຫາຍວິກົນຈະລິດແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ໆລໆ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ໆລໆ

ອະມູລະຫະວິໄນ ສົງໃຫ້ແລ້ວແກ່ພິກຂຸຄັກຄະຜູ້ຫາຍວິກົນຈະລິດແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ອະມູລະຫະວິໄນບໍ່ຊອບທຳ ໓ ກໍລະນີ

[໑໙໘] ພິກຂຸທັງຫຼາຍ ການໃຫ້ອະມູລະຫະວິໄນ ບໍ່ຊອບທຳ ໓ ໝວດ ຊອບທຳ ໓ ໝວດນີ້ ການໃຫ້ອະມູລະຫະວິໄນ ບໍ່ຊອບທຳ ໓ ໝວດ ເປັນແນວໃດ?

## ໝວດທີ ໑

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຕ້ອງອາບັດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນວ່າ “ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້” ພິກຂຸນັ້ນກຳລັງຣະນຶກ ກ່າວແນວນີ້ວ່າ “ທ່ານ ຂ້ານ້ອຍຕ້ອງອາບັດແລ້ວ ແຕ່ຣະນຶກອາບັດເຫັນປານນີ້ບໍ່ໄດ້” ສົງໃຫ້ອະມູລະຫະວິໄນແກ່ພິກຂຸນັ້ນ ການໃຫ້ອະມູລະຫະວິໄນບໍ່ຊອບທຳ

## ໝວດທີ ໒

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນວ່າ “ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້” ພິກຂຸນັ້ນຣະນຶກໄດ້ຈຶ່ງກ່າວແນວນີ້ວ່າ “ທ່ານ ຂ້ານ້ອຍນຶກໄດ້ຄືຄວາມຝັນ” ສົງໃຫ້ອະມູລະຫະ-ວິໄນແກ່ພິກຂຸນັ້ນ ການໃຫ້ອະມູລະຫະວິໄນບໍ່ຊອບທຳ

## ໝວດທີ ໓

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວ ໂຈດພິກຂຸນັ້ນວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ພິກຂຸນັ້ນຫາຍ ວິກົນຈະລິດແລ້ວ ແຕ່ຍັງເຮັດເປັນວິກົນຈະລິດວ່າ "ຂ້ານ້ອຍກໍເຮັດແນວນີ້ ທ່ານທັງຫຼາຍກໍເຮັດ ແນວນີ້ ສິ່ງນີ້ຄວນແກ່ຂ້ານ້ອຍ ສິ່ງນີ້ຄວນແມ່ນແກ່ທ່ານທັງຫຼາຍ" ສົງໃຫ້ອະມູລະຫະວິໄນແກ່ພິກ ຂຸນັ້ນ ການໃຫ້ອະມູລະຫະວິໄນບໍ່ຊອບທຳ ການໃຫ້ອະມູລະຫະວິໄນບໍ່ຊອບທຳ ໓ ໝວດເຫຼົ່ານີ້

## ອະມູລະຫະວິໄນຊອບທຳ ໓ ກໍລະນີ

## ໝວດທີ ໑

[໑໙໙] ການໃຫ້ອະມູລະຫະວິໄນຊອບທຳ ໓ ໝວດ ເປັນແນວໃດ? ພິກຂຸທັງຫຼາຍ ກໍໃນ ກໍລະນີນີ້ ພິກຂຸວິກົນຈະລິດ ມີຈິດປັ່ນປ່ວນ ພິກຂຸນັ້ນຜູ້ວິກົນຈະລິດ ມີຈິດປັ່ນປ່ວນໄດ້ປະພຶດ ລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວ ດ້ວຍວາຈາແລະພະຍາ ຍາມເຮັດດ້ວຍກາຍ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸ ນັ້ນວ່າ "ທ່ານຕ້ອງອາບັດ ແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ພິກຂຸນັ້ນຣະນຶກບໍ່ໄດ້ຈຶ່ງກ່າວ ແນວນີ້ວ່າ "ທ່ານ ຂ້ານ້ອຍ ຕ້ອງອາບັດແລ້ວ ແຕ່ຣະນຶກອາບັດເຫັນປານນີ້ບໍ່ໄດ້" ສົງໃຫ້ອະມູລະຫະວິໄນແກ່ພິກຂຸນັ້ນ ການ ໃຫ້ອະມູລະຫະວິໄນຊອບທຳ

## ໝວດທີ ໒

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທີ່ວິກົນຈະລິດ ມີຈິດປັ່ນປ່ວນ ພິກຂຸນັ້ນຜູ້ ວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດ ພິກຂຸນັ້ນວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ພິກຂຸນັ້ນ ຣະນຶກບໍ່ໄດ້ຈຶ່ງ ກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍນຶກໄດ້ຄືຄວາມຝັນ" ສົງໃຫ້ອະມູລະຫະວິໄນ ແກ່ພິກຂຸນັ້ນ ການ ໃຫ້ອະມູລະຫະວິໄນຊອບທຳ

## ໝວດທີ ໓

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸວິກົນຈະລິດ ມີຈິດປັ່ນປ່ວນ ພິກຂຸນັ້ນ ຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນ

ຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນວ່າ "ທ່ານຕ້ອງອາບັດແລ້ວຈົ່ງຣະນຶກອາບັດເຫັນປານນີ້" ພິກຂຸນັ້ນຍັງວິກົນຈະລິດຢູ່ ເຮັດເປັນວິກົນຈະລິດວ່າ "ຜົມກໍເຮັດແບບນີ້ ແມ່ນທ່ານທັງຫຼາຍກໍເຮັດແບບນີ້ ສິ່ງນີ້ຄວນແມ່ນແກ່ຜົມ ສິ່ງນີ້ຄວນແມ່ນແກ່ທ່ານທັງຫຼາຍ" ສົງໃຫ້ອະມູລະຫະວິໄນແກ່ພິກຂຸນັ້ນການ ໃຫ້ອະມູລະຫະວິໄນຊອບທຳ

ການໃຫ້ອະມູລະຫະວິໄນຊອບທຳ ໓ ໝວດເຫຼົ່ານີ້

**ອະມູລະຫະວິໄນ ຈົບ**

# ໔. ປະຕິນຍາຕະກະຣະນະ

## ວ່າດ້ວຍລະງັບອະທິກອນຕາມຄຳຮັບຂອງຈຳເລີຍ

### ເລື້ອງພຣະສັບພັກຄີ

[໔໐໐] ສະໄໝນັ້ນ ພວກພິກຂຸສັບພັກຄີລົງໂທດພິກຂຸທັງຫຼາຍໂດຍບໍ່ໄດ້ປະຕິຍານ ຄື ລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງລົງໂທດພິກຂຸທັງຫຼາຍໂດຍບໍ່ໄດ້ປະຕິຍານນໍ ຄື ລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

### ຊົງສອບຖາມ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ຯລຯ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງລົງໂທດພິກຂຸທັງຫຼາຍໂດຍບໍ່ໄດ້ປະຕິຍານ ຄື ລົງຕັດຊະນີຍະກຳແດ່ ນິຍະສະກຳແດ່ ປັບພາຊະນີຍະກຳແດ່ ປະຕິສາຣະນີຍະກຳແດ່ ອຸກເຂປະນີຍະກຳແດ່ ອົງໃດລົງ ຕ້ອງອາບັດທຸກກົດ

## ປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

[໔໐໑] ພິກຂຸທັງຫຼາຍ ປະຕິນຍາຕະກະຣະນະທີ່ບໍ່ຊອບທຳແນວນີ້ ທີ່ຊອບທຳແນວນີ້ ພິກຂຸທັງຫຼາຍ ປະຕິຍານກະຣະນະທີ່ບໍ່ຊອບທຳ ເປັນແນວໃດ?

ຄື ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ຂ້ານ້ອຍຕ້ອງອາບັດສັງຄາທິເສດ" ສົງປັບອາບັດສັງຄາທິເສດພິກຂຸນັ້ນ (ການປັບແນວນີ້) ຊື່ວ່າ ປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ໗ລ໗ ຂ້ານ້ອຍຕ້ອງອາບັດຖຸນລັດໄຈ" ສົງປັບອາບັດຖຸນລັດໄຈພິກຂຸນັ້ນ (ການປັບແນວນີ້) ຊື່ວ່າ ປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ຂ້ານ້ອຍຕ້ອງອາບັດປາຈິດຕີ" ສົງປັບອາບັດປາຈິດຕີພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ຂ້ານ້ອຍຕ້ ອງອາບັດປະຕິເທສະນິຍະ" ສົງປັບອາບັດປະຕິເທສະນິຍະພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ຂ້ານ້ອຍຕ້ອງອາບັດທຸກກົດ" ສົງປັບອາບັດທຸກກົດພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດປາຣາຊິກ ຂ້ານ້ອຍຕ້ອງອາບັດທຸບພາສິດ" ສົງປັບອາບັດທຸບພາສິດພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດສັງຄາທິເສດ ໆລໆ ອາບັດຖຸນລັດໄຈ ໆລໆ ອາບັດປາຈິດຕີ ໆລໆ ອາບັດປະຕິເທສະນີຍະ ໆລໆ ອາບັດທຸກກົດ ໆລໆ

ພິກຂຸຕ້ອງອາບັດທຸບພາສິດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດທຸບພາສິດ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດທຸບພາສິດ ຂ້ານ້ອຍຕ້ອງອາບັດປາຣາຊິກ" ສົງປັບອາບັດປາຣາຊິກພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸຕ້ອງອາບັດທຸບພາສິດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດທຸບພາສິດ" ພິກຂຸນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍບໍ່ໄດ້ຕ້ອງອາບັດທຸບພາສິດ ຂ້ານ້ອຍຕ້ອງອາບັດສັງຄາທິເສດ ໆລໆ ອາບັດຖຸນລັດໄຈ ໆລໆ ອາບັດປາຈິດຕີ ໆລໆ ອາບັດປະຕິເທສະນີຍະ ໆລໆ ອາບັດທຸກກົດ" ສົງປັບອາບັດທຸກກົດພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

ພິກຂຸທັງຫຼາຍ ແນວນີ້ແລ ປະຕິນຍາຕະກະຣະນະທີ່ບໍ່ຊອບທຳ

## ປະຕິນຍາຕະກະຣະນະທີ່ຊອບທຳ

ພິກຂຸທັງຫຼາຍ ປະຕິນຍາຕະກະຣະນະທີ່ຊອບທຳ ເປັນແນວໃດ?

ຄື ພິກຂຸຕ້ອງອາບັດປາຣາຊິກ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນວ່າ "ທ່ານຕ້ອງອາບັດປາຣາຊິກ" ພິກຂຸນັ້ນກ່າວແນວນີ້ວ່າ "ຖືກແລ້ວທ່ານ

ຂ້ານ້ອຍຕ້ອງອາບັດປາຣາຊິກ" ສົງປັບອາບັດປາຣາຊິກພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິນຍາຕະກະຣະນະທີ່ຊອບທຳ

ພິກຂຸຕ້ອງອາບັດສັງຄາທິເສດ ໆລໆ ອາບັດຖຸນລັດໄຈ ໆລໆ ອາບັດປາຈິດຕີ ໆລໆ ອາບັດປະຕິເທສະນີຍະ ໆລໆ ອາບັດທຸກກົດ ໆລໆ

ພິກຂຸຕ້ອງອາບັດທຸບພາສິດ ສົງຫຼືພິກຂຸຫຼາຍອົງ ຫຼືພິກຂຸອົງດຽວໂຈດພິກຂຸນັ້ນ ວ່າ "ທ່ານຕ້ອງອາບັດທຸບພາສິດ" ພິກຂຸນັ້ນກ່າວແນວນີ້ວ່າ "ຖືກແລ້ວທ່ານ ຂ້ານ້ອຍຕ້ອງອາບັດ ທຸບພາສິດ" ສົງປັບອາບັດທຸບພາສິດພິກຂຸນັ້ນ (ການປັບແນວນີ້) ຊື່ວ່າປະຕິຍານຕກະຣະໜະທີ່ຊອບທຳ

ພິກຂຸທັງຫຼາຍ ແນວນີ້ແລ ປະຕິນຍາຕະກະຣະນະທີ່ຊອບທຳ

**ປະຕິນຍາຕະກະຣະນະ ຈົບ**

# ໕. ເຍພຸຍຍະສິກາ

## ວ່າດ້ວຍລະງັບອະທິກອນຕາມສຽງຂ້າງຫຼາຍ

### ເລື້ອງພິກຂຸຫຼາຍອົງ

[໔໐໔] ສະໄໝນັ້ນ ພິກຂຸທັງຫຼາຍເປັນຜູ້ໝາງໃຈ ຜິດຖຽງ ວິວາດກັນ ໃນທ່າມກາງສົງ ກ່າວສຽບແທງກັນແລະກັນດ້ວຍຫອກຄືປາກຢູ່ ບໍ່ອາດລະງັບອະທິກອນນັ້ນໄດ້

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລະງັບອະທິກອນເຫັນປານນີ້ ດ້ວຍເຍພຸຍຍະສິກາ ສົງເພິ່ງແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍອົງ ໕ ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກສະຫຼາກທີ່ຈັບແລ້ວແລະຍັງບໍ່ໄດ້ຈັບ

### ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງພິກຂຸຜູ້ໃຫ້ຈັບສະຫຼາກແນວນີ້ ຄື ເບື້ອງຕົ້ນເພິ່ງຂໍໃຫ້ພິກຂຸຮັບ ບັດແລ້ວພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໐໓] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸ ຊື່ນີ້ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ໃຫ້ຈັບສະຫຼາກແລ້ວ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ ສົງແຕ່ງຕັ້ງໃຫ້ເປັນຜູ້ໃຫ້ຈັບສະຫຼາກແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

### ການຈັບສະຫຼາກທີ່ບໍ່ຊອບທຳ ໑໐ ຢ່າງ

[໔໐໔] ພິກຂຸທັງຫຼາຍ ການຈັບສະຫຼາກທີ່ບໍ່ຊອບທຳ ໑໐ ຢ່າງ ທີ່ຊອບທຳ ໑໐ ຢ່າງເຫຼົ່ານີ້

ການຈັບສະຫຼາກທີ່ບໍ່ຊອບທຳ ໑໐ ຢ່າງ ເປັນແນວໃດ? ຄື

໑. ອະທິກອນເປັນເລື້ອງເລັກໜ້ອຍ
໒. ບໍ່ລຸກລາມໄປໄກ
໓. ພິກຂຸພວກນັ້ນຣະນຶກບໍ່ໄດ້ເອງ
໔. ຮູ້ວ່າ ອະທຳມະວາທີຫຼາຍກວ່າແລະພວກອື່ນກໍໃຫ້ຣະນຶກບໍ່ໄດ້
໕. ຮູ້ວ່າ ແນວໃດອະທຳມະວາທີເພິ່ງມີຫຼາຍກວ່າ
໖. ຮູ້ວ່າ ສົງຈັກແຕກກັນ
໗. ຮູ້ວ່າ ແນວໃດສົງເພິ່ງແຕກກັນ
໘. ອະທຳມະວາທີພິກຂຸຈັບໂດຍບໍ່ຊອບທຳ
໙. ອະທຳມະວາທີພິກຂຸແບ່ງພວກກັນຈັບ
໑໐. ບໍ່ຈັບຕາມຄວາມເຫັນ

ການຈັບສະຫຼາກທີ່ບໍ່ຊອບທຳ ໑໐ ຢ່າງ ເຫຼົ່ານີ້

## ການຈັບສະຫຼາກທີ່ຊອບທຳ ໑໐ ຢ່າງ

ການຈັບສະຫຼາກທີ່ຊອບທຳ ໑໐ ຢ່າງ ເປັນແນວໃດ? ຄື

໑. ອະທິກອນບໍ່ແມ່ນເລື້ອງເລັກໜ້ອຍ
໒. ລຸກລາມໄປໄກ
໓. ພິກຂຸພວກນັ້ນຣະນຶກໄດ້ເອງ
໔. ຮູ້ວ່າ ທຳມະວາທີຫຼາຍກວ່າແລະພວກອື່ນກໍໃຫ້ຣະນຶກໄດ້
໕. ຮູ້ວ່າ ແນວໃດທຳມະວາທີເພິ່ງມີຫຼາຍກວ່າ
໖. ຮູ້ວ່າ ສົງຈັກບໍ່ແຕກກັນ
໗. ຮູ້ວ່າ ແນວໃດສົງບໍ່ເພິ່ງແຕກກັນ
໘. ທຳມະວາທີພິກຂຸຈັບໂດຍຊອບທຳ
໙. ທຳມະວາທີພິກຂຸພ້ອມພຽງກັນຈັບ
໑໐. ຈັບຕາມຄວາມເຫັນ

ການຈັບສະຫຼາກທີ່ຊອບທຳ ໑໐ ຢ່າງ ເຫຼົ່ານີ້

**ເຍພຸຍຍະສີກາ ຈົບ**

# ຜ. ຕັດສະປາປີຍະສິກາ

## ວ່າດ້ວຍລະງັບອະທິກອນໂດຍການລົງໂທດແກ່ຜູ້ເຮັດຜິດ

### ເລື້ອງພຣະອຸປະວາລະ

[໔໐໕] ສະໄໝນັ້ນ ພຣະອຸປະວາລະຖືກຊັກຖາມອາບັດໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະອຸປະວາລະຖືກຊັກຖາມອາບັດໃນທ່າມກາງສົງ ຈຶ່ງໄດ້ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸອຸປະວາລະຖືກຊັກຖາມອາບັດໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ສົງຈົ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸອຸປະວາລະ

### ວິທີລົງຕັດສະປາປີຍະສິກາກຳແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລົງຕັດສະປາປີຍະສິກາກຳແນວນີ້ ຄືເບື້ອງຕົ້ນເພິ່ງໂຈດພິກຂຸອຸປວາລະກ່ອນ ບັດແລ້ວເພິ່ງໃຫ້ພິກຂຸອຸປະວາລະນັ້ນໃຫ້ການແລ້ວເພິ່ງປັບອາບັດ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

[໔໐໖] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸປະວາລະນີ້ຖືກຊັກຖາມອາບັດ ໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດ ອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ຖ້າສົງພ້ອມກັນແລ້ວເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸອຸປວາລະ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸອຸປະວາລະນີ້ຖືກຊັກຖາມອາບັດໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ສົງລົງຕັດສະປາປີຍະສິກາກຳແກ່ພິກຂຸອຸປະວາລະແລ້ວ ທ່ານອົງໃດເຫັນດ້ວຍກັບການລົງຕັດສະປາປີຍະສິກາກຳແກ່ພິກຂຸອຸປະວາລະ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯลฯ

ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯลฯ

ຕັດສະປາປີຍະສິກາກຳ ສົງລົງແລ້ວແກ່ພິກຂຸອຸປະວາລະ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ຕັດສະປາປີຍະສິກາກຳທີ່ຊອບທຳ ໕ ຢ່າງ

[໔໐໗] ພິກຂຸທັງຫຼາຍ ການລົງຕັດສະປາປີຍະສິກາກຳຊອບທຳ ໕ ຢ່າງນີ້ ຄື

໑. ພິກຂຸເປັນຜູ້ບໍ່ສະອາດ

໒. ເປັນອະລັດຊີ

໓. ເປັນຜູ້ຖືກໂຈດ

໔. ສົງລົງຕັດສະປາປີຍະສິກາກຳແກ່ພິກຂຸນັ້ນ

໕. ສົງພ້ອມພຽງກັນລົງໂດຍທຳ

ພິກຂຸທັງຫຼາຍ ການລົງຕັດສະປາປີຍະສິກາກຳຊອບທຳ ໕ ຢ່າງນີ້ແລ

## ອະທຳມະກຳມະທະວາທະສະກະ

## ວ່າດ້ວຍຕັດສະປາປີຍະສິກາກຳທີ່ບໍ່ຊອບທຳ ໑໒ ໝວດ

## ໝວດທີ ໑

[໔໐໘] ພິກຂຸທັງຫຼາຍ ຕັດສະປາປີຍະສິກາກຳທີ່ປະກອບດ້ວຍອົງ ໓ ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

໑. ລົງລັບຫຼັງ

໒. ລົງໂດຍບໍ່ສອບຖາມກ່ອນ

໓. ລົງໂດຍບໍ່ໄດ້ປະຕິຍານ

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ๓ ເຫຼົ່ານີ້ແລ ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຯລຯ

## ໝວດທີ ๑๘

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ๓ ແມ່ນອື່ນອີກ ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ ຄື

๑. ບໍ່ປັບອາບັດກ່ອນແລ້ວຈຶ່ງລົງ
๒. ລົງໂດຍບໍ່ຊອບທຳ
๓. ສົງແບ່ງພວກກັນລົງ

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ๓ ເຫຼົ່ານີ້ແລ ເປັນກຳບໍ່ຊອບດ້ວຍທຳ ເປັນກຳບໍ່ຊອບດ້ວຍວິໄນ ແລະລະງັບບໍ່ດີ

**ອະທຳມະກຳມະທະວາທະສະກະ ຈົບ**

## ທຳມະກຳມະທະວາທະສະກະ

## ວ່າດ້ວຍຕັດສະປາປິຍະສິກາກຳທີ່ຊອບທຳ ๑๘ ໝວດ

## ໝວດທີ ๑

[๒๐๗] ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ๓ ເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີແລ້ວ ຄື

๑. ລົງຕໍ່ໜ້າ
๒. ລົງໂດຍສອບຖາມກ່ອນ
๓. ລົງຕາມປະຕິຍານ

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ๓ ເຫຼົ່ານີ້ແລ ເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີແລ້ວ ຯລຯ

## ໝວດທີ ໑໔

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ໓ ແມ່ນອື່ນອີກ ເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີແລ້ວ ຄື

໑. ປັບອາບັດກ່ອນແລ້ວຈຶ່ງລົງ
໔. ລົງໂດຍທຳ
໓. ສົງພ້ອມພຽງກັນລົງ

ພິກຂຸທັງຫຼາຍ ຕັດສະປາປິຍະສິກາກຳທີ່ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ ເປັນກຳຊອບດ້ວຍທຳ ເປັນກຳຊອບດ້ວຍວິໄນ ແລະລະງັບດີແລ້ວ

**ທຳມະກຳມະທະວາທະສະກະ ຈົບ**

## ອາກັງຂະມານະສັກກະ

## ວ່າດ້ວຍສົງມຸ້ງຫວັງທີ່ຈະລົງຕັດສະປາປິຍະສິກາກຳ ໖ ໝວດ

## ໝວດທີ ໑

[໔໑໐] ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປິຍະສິກາກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ຄື

໑. ເປັນຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໔. ໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ຢູ່ຄຸກຄີກັບຄະລຶຫັດດ້ວຍການຄຸກຄີກັບຄະລຶຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງ ເພິ່ງລົງຕັດສະປາປິຍະສິກາກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ເຫຼົ່ານີ້ແລ (໑)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປິຍະສິກາກຳແກ່ພິກຂຸຜູ້ປະກອບດ້ວຍອົງ ໓ ແມ່ນອື່ນອີກ ຄື

໑. ເປັນຜູ້ມີສີນວິບັດໃນອະທິສີນ
໒. ເປັນຜູ້ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ໆລໆ ເຫຼົ່ານີ້ແລ (໒)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸຜູ້ປະກອບດ້ວຍ ອົງ ໓ ແມ່ນອື່ນອີກ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸຜູ້ປະກອບດ້ວຍ ອົງ ໓ ເຫຼົ່ານີ້ແລ (໓)

## ໝວດທີ ໔

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸ ໓ ອົງ ຄື

໑. ອົງໜຶ່ງເປັນຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງ
໒. ອົງໜຶ່ງໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ຕ້ອງອາບັດກຳນົດບໍ່ໄດ້
໓. ອົງໜຶ່ງຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດທີ່ບໍ່ສົມຄວນ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳ ແກ່ພິກຂຸ ໓ ອົງເຫຼົ່ານີ້ແລ (໔)

## ໝວດທີ ໕

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງເປັນຜູ້ມີສີນວິບັດໃນອະທິສີນ
໒. ອົງໜຶ່ງເປັນຜູ້ມີອາຈາຣະວິບັດໃອັດຊາຈານ
໓. ອົງໜຶ່ງເປັນຜູ້ມີທິດຖິວິບັດໃນອະຕິທິດຖິ

ພິກຂຸທັງຫຼາຍ ໆລໆ ອົງ ເຫຼົ່ານີ້ແລ (໕)

## ໝວດທີ ໓

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳແກ່ພິກຂຸອື່ນອີກ ໓ ອົງ ຄື

໑. ອົງໜຶ່ງກ່າວຕິຕຽນພຣະພຸດທະເຈົ້າ
໔. ອົງໜຶ່ງກ່າວຕິຕຽນພຣະທຳ
໓. ອົງໜຶ່ງກ່າວຕິຕຽນພຣະສົງ

ພິກຂຸທັງຫຼາຍ ສົງເມື່ອມຸ້ງຫວັງເພິ່ງລົງຕັດສະປາປີຍະສິກາກຳ ແກ່ພິກຂຸ ໓ ອົງ ເຫຼົ່ານີ້ແລ (໓)

**ອາກັງຂະມານະສັກກະ ຈົບ**

## ອັດຖາຣະສະວັດຕະ

## ວ່າດ້ວຍຂໍ້ວັດປະຕິບັດ ໑໗ ຂໍ້ໃນຕັດສະປາປີຍະສິກາກຳ

[໔໑໑] ພິກຂຸທັງຫຼາຍ ພິກຂຸທີ່ຖືກສົງລົງຕັດສະປາປີຍະສິກາກຳແລ້ວ ເພິ່ງປະພຶດ ໂດຍຊອບ ການປະພຶດໂດຍຊອບໃນເລື້ອງນັ້ນດັ່ງນີ້

໑. ບໍ່ເພິ່ງໃຫ້ອຸປະສົມບົດ
໔. ບໍ່ເພິ່ງໃຫ້ນິໄສ
໓. ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ
໔. ບໍ່ເພິ່ງຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວກໍບໍ່ເພິ່ງສັ່ງສອນ
ฯລฯ
໑໗. ບໍ່ເພິ່ງຊັກຊວນກັນກໍ່ຄວາມຜິດຖຽງ

ຄັ້ງນັ້ນ ສົງໄດ້ລົງຕັດສະປາປີຍະສິກາກຳແກ່ພິກຂຸອຸປະວາລະແລ້ວ

**ຕັດສະປາປີຍະສິກາ ຈົບ**

# ໗. ຕິນະວັດຖາຣະກະ

## ວ່າດ້ວຍລະງັບອະທິກອນໂດຍການປະນີປະນອມ

### ເລື້ອງພິກຂຸກໍ່ຄວາມວຸ່ນວາຍ

[໔໑໔] ສະໄໝນັ້ນ ພິກຂຸທັງຫຼາຍໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາ ແລະພະຍາຍາມເຮັດດ້ວຍກາຍ

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ພວກເຮົາຈະເພິ່ງປະຕິບັດແນວໃດນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

### ພຸດທານຸຍາດໃຫ້ລະງັບອະທິກອນດ້ວຍຕິນະວັດຖາຣະກະ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້

ພວກພິກຂຸໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກພິກຂຸໃນໝູ່ນັ້ນເປີກສາແນວນີ້ວ່າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດ ສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງເປັນໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ລະງັບອະທິກອນປານນີ້ດ້ວຍຕິນະວັດຖາຣະກະ

### ວິທີລະງັບອະທິກອນດ້ວຍຕິນະວັດຖາຣະກະແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລະງັບແນວນີ້ ພິກຂຸທຸກ ໆ ອົງເພິ່ງປະຊຸມໃນທີ່ແຫ່ງດຽວກັນ ບັດແລ້ວພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມ

ເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມກັນແລ້ວ ເພິ່ງລະງັບອະທິກອນນີ້ດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດໜຍາບ[໑] ເວັ້ນ ອາບັດເນື່ອງດ້ວຍຄະລິຫັດ[໒]

ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນ ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ຝ່າຍຂອງຕົນຮູ້ດ້ວຍຍັດຕິກຳມະວາຈາວ່າ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາ ແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານທັງຫຼາຍ ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານທັງຫຼາຍແລະເພື່ອປະໂຫຍດແກ່ຕົນ

ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນອີກພວກໜຶ່ງ ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ຝ່າຍຂອງຕົນຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະ ພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາ ບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ

[໔໑໙] ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນອີກພວກໜຶ່ງ ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ຝ່າຍຂອງຕົນຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາ ແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມ

ກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນ ໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາ ບັດທີ່ມີໂທດຫຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາ ແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຂ້າພະເຈົ້າສະແດງອາບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ ທ່ານອົງໃດເຫັນດ້ວຍກັບການສະແດງອາບັດເຫຼົ່ານີ້ຂອງພວກເຮົາໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອາບັດເຫຼົ່ານີ້ຂອງພວກເຮົາ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ຂ້າພະເຈົ້າສະແດງແລ້ວໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

[໔໑໔] ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນອີກພວກໜຶ່ງ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນໃນທ່າມ ກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາ ບັດທີ່ມີໂທດຫຍາບ ເວັ້ນອາບັດເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາ ແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນ ນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຂ້າພະເຈົ້າສະແດງອາບັດຂອງທ່ານເຫຼົ່ານີ້ ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ

ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລືຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ ທ່ານອົງໃດເຫັນດ້ວຍກັບການສະແດງອາບັດເຫຼົ່ານີ້ຂອງພວກເຮົາໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລືຫັດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອາບັດເຫຼົ່ານີ້ຂອງພວກເຮົາ ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລືຫັດ ຂ້າພະເຈົ້າສະແດງແລ້ວໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸທັງຫຼາຍ ດ້ວຍອາການແນວນີ້ ພິກຂຸເຫຼົ່ານັ້ນເປັນຜູ້ອອກແລ້ວຈາກອາບັດເຫຼົ່ານັ້ນ ເວັ້ນອາບັດທີ່ມີໂທດໜຍາບ ເວັ້ນອາບັດເນື່ອງດ້ວຍຄະລືຫັດ ເວັ້ນຜູ້ເປີດເຜີຍຄວາມເຫັນ ເວັ້ນຜູ້ບໍ່ໄດ້ຢູ່ໃນບ່ອນນັ້ນ

**ຕິນະວັດຖາຣະກະ ຈົບ**

# ໗. ອະທິກະຣະນະ

## ວ່າດ້ວຍອະທິກອນ ໔ ຢ່າງ

## ເລື້ອງພິກຂຸແລະພິກຂຸນີຜິດຖຽງກັນ

[໘໑໕] ສະໄໝນັ້ນ ພວກພິກຂຸຜິດຖຽງກັບພວກພິກຂຸນີແດ່ ພວກພິກຂຸນີຜິດຖຽງກັບພວກພິກຂຸແດ່ ຝ່າຍພຣະສັນນະເຂົ້າຂ້າງພວກພິກຂຸນີແລ້ວຜິດຖຽງກັບພວກພິກຂຸ ຊັກຊວນພວກພິກຂຸໃຫ້ໄປເຂົ້າຂ້າງພິກຂຸນີ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສັນນະຈຶ່ງໄດ້ເຂົ້າຂ້າງພວກພິກຂຸນີ ແລ້ວຜິດຖຽງກັບພວກພິກຂຸ ຊັກຊວນພວກພິກຂຸໃຫ້ໄປເຂົ້າຂ້າງພິກຂຸນີນໍ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸສັນນະເຂົ້າຂ້າງພວກພິກຂຸນີແລ້ວຜິດຖຽງກັບພວກພິກຂຸ ຊັກຊວນພວກພິກຂຸໃຫ້ໄປເຂົ້າຂ້າງພິກຂຸນີ ແມ່ນບໍ?

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວ ຯລຯ ຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ອະທິກອນມີ ໔ ນີ້ ຄື

໑. ວິວາທາທິກອນ
໒. ອະນຸວາທາທິກອນ
໓. ອາປັດຕາທິກອນ
໔. ກິດຈາທິກອນ

## ໑. ວິວາທາທິກອນ

ໃນອະທິກອນ ໔ ຢ່າງນັ້ນ ວິວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ຍ່ອມຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ
໒. ນີ້ວິໄນ ນີ້ບໍ່ແມ່ນວິໄນ
໓. ນີ້ຕະຖາຄົດພາສິດໄວ້ ຕັດໄວ້ ນີ້ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້
໔. ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດໄດ້ປະພຶດມາ ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາ
໕. ນີ້ຕະຖາຄົດຊົງບັນຍັດໄວ້ ນີ້ຕະຖາຄົດບໍ່ໄດ້ຊົງບັນຍັດໄວ້
໖. ນີ້ອາບັດ ນີ້ອະນາບັດ
໗. ນີ້ອາບັດເບົາ ນີ້ອາບັດໜັກ
໘. ນີ້ອາບັດມີສ່ວນເຫຼືອ ນີ້ອາບັດບໍ່ມີສ່ວນເຫຼືອ
໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ຄວາມກ່າວຕ່າງກັນ ຄວາມກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມໃຈ ການກ່າວຄຳໃນເລື້ອງນັ້ນໃດ ນີ້ຮຽກວ່າ ວິວາທາທິກອນ

## ໒. ອະນຸວາທາທິກອນ

ໃນອະທິກອນ ໔ ຢ່າງນັ້ນ ອະນຸວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ຍ່ອມໂຈດພິກຂຸດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມອຸດສາຫະໂຈດ ການຕາມເພີ່ມກຳລັງໃຫ້ ໃນເລື້ອງນັ້ນອັນໃດ ນີ້ຮຽກວ່າອະນຸວາທາທິກອນ

## ໓. ອາປັດຕາທິກອນ

ໃນອະທິກອນ ໔ ຢ່າງນັ້ນ ອາປັດຕາທິກອນ ເປັນແນວໃດ?

ອາບັດທັງ ໕ ກອງ ຊື່ອາປັດຕາທິກອນ ອາບັດທັງ ໗ ກອງ ຊື່ອາປັດຕາທິກອນ ນີ້ຮຽກວ່າ ອາປັດຕາທິກອນ

## ໔. ກິດຈາທິກອນ

ໃນອະທິກອນ ໔ ຢ່າງນັ້ນ ກິດຈາທິກອນ ເປັນແນວໃດ?

ຄວາມເປັນໜ້າທີ່ ຄວາມເປັນກະຣະນີຍະແຫ່ງສົງໃດ ຄື (໑) ອະປະໂລກະນະກຳ (໒) ຍັດຕິກຳ (໓) ຍັດຕິທຸຕິຍະກຳ (໔) ຍັດຕິຈະຕຸດຖະກຳ ນີ້ຮຽກວ່າ ກິດຈາທິກອນ

**ອະທິກອນ ໔ ຢ່າງ ຈົບ**

## ມູນແຫ່ງວິວາທາທິກອນ

[໔໑໖] ອັນໃດເປັນມູນແຫ່ງວິວາທາທິກອນ

ມູນເຫດແຫ່ງການຜິດຖຽງ ໖ ເປັນມູນແຫ່ງວິວາທາທິກອນ ອະກຸສົນມູນທັງ ໓ ເປັນມູນແຫ່ງ ວິວາທາທິກອນ ກຸສົນມູນທັງ ໓ ເປັນມູນແຫ່ງວິວາທາທິກອນ

## ວິວາທະມູນ ໖

ມູນເຫດແຫ່ງການຜິດຖຽງ ໖ ເປັນມູນແຫ່ງວິວາທາທິກອນ ອັນໃດແດ່

ພິກຂຸທັງຫຼາຍ ກໍພິກຂຸໃນທຳວິໄນນີ້

໑. ເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸໃດ ເປັນຜູ້ມັກໂກດ ຜູກໂກດໄວ້

ພິກຂຸນັ້ນ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງຢູ່ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນນັ້ນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນແຫ່ງການຜິດຖຽງແນວນີ້ ພາຍໃນ ຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນແຫ່ງຜິດຖຽງທີ່ເປັນບາບພາຍໃນ ຫຼືພາຍນອກນັ້ນແລ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນແຫ່ງການຜິດຖຽງແນວນີ້ ພາຍໃນຫຼື ພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງປະຕິບັດເພື່ອຄວາມຍຶດເຍື້ອ ແຫ່ງມູນເຫດແຫ່ງການຜິດ ຖຽງທີ່ເປັນ ບາບນັ້ນແລ ການລະມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນຍ່ອມມີດ້ວຍອາການ ແນວນີ້ ຄວາມຍຶດເຍື້ອແຫ່ງມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມມີຕໍ່ໄປດ້ວຍອາການ ແນວນີ້

໒. ເປັນຜູ້ລົບຫຼູ່ຕີສະເໝີທ່ານ ฯລฯ
໓. ເປັນຜູ້ມີປົກກະຕິຣິດສະຫຍາ ຂີ້ຖີ່ ฯລฯ
໔. ເປັນຜູ້ອວດດີ ເຈົ້າມາຍາ ฯລฯ
໕. ເປັນຜູ້ມີຄວາມປາຖະໜາຊົ່ວ ເປັນມິດສາທິດຖິ ฯລฯ

໖. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸ ທັງຫຼາຍ ພິກຂຸໃດເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ ຍາກ ພິກຂຸນັ້ນຍ່ອມບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດ ສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະ ສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນນັ້ນ ຍ່ອມກໍ່ການຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດ ທັງຫຼາຍ

ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການຜິດຖຽງແນວນີ້ ພາຍໃນຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການຜິດຖຽງທີ່ ເປັນບາບ ພາຍໃນຫຼືພາຍນອກນັ້ນແລ ຖ້າທ່ານທັງຫຼາຍ ບໍ່ພິຈາລະນາເຫັນມູນແຫ່ງການຜິດຖຽງ ແນວນີ້ ພາຍໃນຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍ ເພິ່ງປະຕິບັດເພື່ອຄວາມຍຶດເຍື້ອແຫ່ງມູນ ເຫດແຫ່ງການຜິດຖຽງທີ່ເປັນ ບາບນັ້ນແລ ການລະມູນແຫ່ງການຜິດຖຽງທີ່ເປັນບາບນັ້ນແລ ຍ່ອມມີດ້ວຍອາການແນວນີ້ ຄວາມຍຶດເຍື້ອແຫ່ງມູນເຫດແຫ່ງການຜິດຖຽງທີ່ເປັນບາບນັ້ນ ຍ່ອມ ມີຕໍ່ໄປດ້ວຍອາການແນວນີ້

ມູນແຫ່ງການຜິດຖຽງ ໖ ຢ່າງນີ້ ເປັນມູນແຫ່ງວິວາທາທິກອນ

## ອະກຸສົນມູນ ໑໐

ອະກຸສົນມູນ ໑໐ ເປັນມູນແຫ່ງວິວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ມີຈິດໂລບຜິດຖຽງກັນ ມີຈິດໂກດຜິດຖຽງກັນ ມີຈິດຫຼົງຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ
໔. ນີ້ວິໄນ ນີ້ບໍ່ແມ່ນວິໄນ
໑໐. ນີ້ຕະຖາຄົດພາສິດໄວ້ ຕັດໄວ້ ນີ້ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້
໔. ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດໄດ້ປະພຶດມາ ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາ
໕. ນີ້ຕະຖາຄົດຊົງບັນຍັດໄວ້ ນີ້ຕະຖາຄົດບໍ່ໄດ້ຊົງບັນຍັດໄວ້
໖. ນີ້ອາບັດ ນີ້ອະນາບັດ
໗. ນີ້ອາບັດເບົາ ນີ້ອາບັດໜັກ
໘. ນີ້ອາບັດມີສ່ວນເຫຼືອ ນີ້ອາບັດບໍ່ມີສ່ວນເຫຼືອ
໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ອະກຸສົນມູນ ໑໐ ຢ່າງນີ້ ເປັນມູນແຫ່ງວິວາທາທິກອນ

## ກຸສົນມູນ ໑໐

ກຸສົນມູນ ໑໐ ເປັນມູນແຫ່ງວິວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ມີຈິດບໍ່ໂລບຜິດຖຽງກັນ ມີຈິດບໍ່ໂກດຜິດຖຽງກັນ ມີຈິດບໍ່ຫຼົງຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ
ฯລฯ
໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ກຸສົນມູນ ໑໐ ຢ່າງນີ້ ເປັນມູນແຫ່ງວິວາທາທິກອນ

## ມູນແຫ່ງອະນຸວາທາທິກອນ

[໔໑໗] ອັນໃດເປັນມູນແຫ່ງອະນຸວາທາທິກອນ

ອະນຸວາທະມູນ ໖ ເປັນມູນແຫ່ງອະນຸວາທາທິກອນ ອະກຸສົນມູນທັງ ໓ ເປັນມູນແຫ່ງ

ອະນຸວາທາທິກອນ ກຸສົນມູນທັງ ໓ ເປັນມູນແຫ່ງອະນຸວາທາທິກອນ ແມ່ນກາຍກໍເປັນມູນແຫ່ງ ອະນຸວາທາທິກອນ ແມ່ນວາຈາກໍເປັນມູນແຫ່ງອະນຸວາທາທິກອນ

## ອະນຸວາທະມູນ ໖

ມູນແຫ່ງການໂຈດ ໖ ຢ່າງ ເປັນມູນແຫ່ງອະນຸວາທາທິກອນ ເປັນແນວໃດ? ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸໃດເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸນັ້ນ ບໍ່ມີເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງຢູ່ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸທີ່ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງຢູ່ ແລະບໍ່ເຮັດສິກຂາໃຫ້ບໍລິບູນນັ້ນ ຍ່ອມຍັງການໂຈດກັນໃຫ້ເກີດໃນສົງ ການໂຈດຍ່ອມເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດ

ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນແຫ່ງການໂຈດແນວນີ້ ພາຍໃນຫຼື ພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນແຫ່ງການໂຈດທີ່ເປັນບາບພາຍໃນ ຫຼືພາຍນອກນັ້ນແລ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນແຫ່ງການໂຈດແນວນີ້ ພາຍໃນຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງປະຕິບັດເພື່ອຄວາມຍຶດເຍື້ອ ແຫ່ງມູນເຫດແຫ່ງການໂຈດທີ່ເປັນບາບນັ້ນແລ ການລະມູນເຫດແຫ່ງການໂຈດທີ່ເປັນບາບນັ້ນຍ່ອມມີດ້ວຍອາການແນວນີ້ ຄວາມຍຶດເຍື້ອແຫ່ງມູນເຫດແຫ່ງການໂຈດທີ່ເປັນບາບນັ້ນ ຍ່ອມມີຕໍ່ໄປດ້ວຍອາການ ແນວນີ້

ເປັນຜູ້ລົບຫຼູ່ຕິສະເໜີທ່ານ ຯລຯ<br>
ເປັນຜູ້ມີປີກາກະຕິຣິດສະຫຍາ ຂີ້ຖີ່ ຯລຯ<br>
ເປັນຜູ້ອວດດີ ເຈົ້າມາຍາ ຯລຯ<br>
ເປັນຜູ້ມີຄວາມປາຖະໜາຊົ່ວ ເປັນມິດສາທິດຖິ ຯລຯ

ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸທັງຫຼາຍ ພິກຂຸໃດເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸນັ້ນຍ່ອມບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ

ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນນັ້ນ ຍ່ອມກໍ່ການໂຈດໃຫ້ເກີດຂຶ້ນ ໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການໂຈດແນວນີ້ ພາຍໃນ ຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການໂຈດທີ່ເປັນບາບພາຍໃນຫຼືພາຍນອກນັ້ນແລ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນແຫ່ງການໂຈດແນວນີ້ ພາຍໃນຫຼືພາຍນອກ ໃນຂໍ້ນັ້ນ ທ່ານທັງຫຼາຍເພິ່ງປະຕິບັດເພື່ອຄວາມຍຶດເຍື້ອແຫ່ງມູນເຫດ ແຫ່ງການໂຈດທີ່ເປັນບາບນັ້ນແລ ການລະມູນແຫ່ງການໂຈດທີ່ເປັນບາບນັ້ນແລ ຍ່ອມມີດ້ວຍອາການແນວນີ້ ຄວາມຍຶດເຍື້ອແຫ່ງມູນເຫດແຫ່ງການໂຈດທີ່ເປັນບາບນັ້ນ ຍ່ອມມີຕໍ່ໄປ ດ້ວຍອາການແນວນີ້

ມູນແຫ່ງການໂຈດກັນ ໖ ຢ່າງເຫຼົ່ານີ້ ເປັນມູນແຫ່ງອະນຸວາທາທິກອນ

## ອະກຸສົນມູນ ໓

ອະກຸສົນມູນ ໓ ຢ່າງ ເປັນມູນແຫ່ງອະນຸວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍຍ່ອມມີຈິດໂລບໂຈດ ຍ່ອມມີຈິດໂກດໂຈດ ຍ່ອມມີຈິດຫຼົງໂຈດພິກຂຸ ດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ອະກຸສົນມູນ ໓ ຢ່າງເຫຼົ່ານີ້ ເປັນມູນແຫ່ງອະນຸວາທາທິກອນ

## ກຸສົນມູນ ໓

ກຸສົນມູນ ໓ ຢ່າງ ເປັນມູນແຫ່ງອະນຸວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍ ຍ່ອມມີຈິດບໍ່ໂລບໂຈດ ຍ່ອມມີຈິດບໍ່ໂກດໂຈດ ຍ່ອມມີຈິດບໍ່ຫຼົງໂຈດພິກຂຸ ດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼື ອາຊີວະວິບັດ ກຸສົນມູນ ໓ ຢ່າງເຫຼົ່ານີ້ ເປັນມູນແຫ່ງອະນຸວາທາທິກອນ

## ກາຍ

ອັນໜຶ່ງ ກາຍ ເປັນມູນແຫ່ງອະນຸວາທາທິກອນ ເປັນແນວໃດ?

ໃນກໍລະນີນີ້ ພິກຂຸລາງອົງເປັນຜູ້ມີຜິວພັນໜ້າລັງກຽດ ບໍ່ໜ້າເບິ່ງ ມີຮູບຮ່າງນ້ອຍ ມີອາພາດຫຼາຍ ເປັນຄົນບອດ ງ່ອຍ ເປ້ຍ ຫຼືອຳມະພາດ ພິກຂຸທັງຫຼາຍຍ່ອມໂຈດພິກຂຸນັ້ນ ດ້ວຍກາຍໃດ ກາຍນີ້ເປັນມູນແຫ່ງອະນຸວາທາທິກອນ

**ວາຈາ**

ອັນໜຶ່ງ ວາຈາເປັນມູນແຫ່ງອະນຸວາທາທິກອນ ເປັນແນວໃດ?

ໃນກໍລະນີນີ້ ພິກຂຸລາງອົງເປັນຄົນເວົ້າບໍ່ດີ ເວົ້າບໍ່ແຈ້ງ ເວົ້າທໍາລາຍ ພິກຂຸທັງຫຼາຍຍ່ອມໂຈດພິກຂຸນັ້ນດ້ວຍວາຈາໃດ ວາຈານີ້ເປັນມູນແຫ່ງອະນຸວາທາທິກອນ

## ມູນແຫ່ງອາປັດຕາທິກອນ

[໔໑໗] ອັນໃດເປັນມູນແຫ່ງອາປັດຕາທິກອນ

ສະມຸດຖານແຫ່ງອາບັດ ໖ ຢ່າງ ເປັນມູນແຫ່ງອາປັດຕາທິກອນ ຄື

໑. ອາບັດເກີດທາງກາຍ ບໍ່ແມ່ນທາງວາຈາ ບໍ່ແມ່ນທາງຈິດກໍມີ
໒. ອາບັດເກີດທາງວາຈາ ບໍ່ແມ່ນທາງກາຍ ບໍ່ແມ່ນທາງຈິດກໍມີ
໓. ອາບັດເກີດທາງກາຍກັບວາຈາ ບໍ່ແມ່ນທາງຈິດກໍມີ
໔. ອາບັດເກີດທາງກາຍກັບຈິດ ບໍ່ແມ່ນທາງວາຈາກໍມີ
໕. ອາບັດເກີດທາງວາຈາກັບຈິດ ບໍ່ແມ່ນທາງກາຍກໍມີ
໖. ອາບັດເກີດທາງກາຍວາຈາກັບຈິດກໍມີ

ສະມຸດຖານແຫ່ງອາບັດ ໖ ຢ່າງເຫຼົ່ານີ້ ເປັນມູນແຫ່ງອາປັດຕາທິກອນ

## ມູນແຫ່ງກິດຈາທິກອນ

[໔໑໘] ອັນໃດເປັນມູນແຫ່ງກິດຈາທິກອນ

## ສິ່ງເປັນມູນດຽວແຫ່ງກິດຈາທິກອນ

[໔໒໐] ວິວາທາທິກອນເປັນກຸສົນ ອະກຸສົນ ຫຼືອັບພະຍາກະຕະ ວິວາທາທິກອນເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ

ບັນດາວິວາທາທິກອນນັ້ນ ວິວາທາທິກອນ ເປັນກຸສົນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍມີຈິດເປັນກຸສົນ ຜິດຖຽງກັນວ່າ

໑. ນີ້ທໍາ ນີ້ອະທໍາ
ฯลฯ
໘. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ການກ່າວຕ່າງກັນ ການກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມໃຈ ຄວາມໝາຍໝັ້ນໃນເລື້ອງນັ້ນໃດ ນີ້ຮຽກວ່າ ວິວາທາທິກອນເປັນກຸສົນ

ບັນດາວິວາທາທິກອນນັ້ນ ວິວາທາທິກອນເປັນອະກຸສົນ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍມີຈິດເປັນອະກຸສົນ ຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ

ฯลฯ

໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ການກ່າວຕ່າງກັນ ການກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມໃຈ ຄວາມໝາຍໝັ້ນໃນເລື້ອງນັ້ນໃດ ນີ້ຮຽກວ່າ ວິວາທາທິກອນເປັນອະກຸສົນ

ບັນດາວິວາທາທິກອນນັ້ນ ວິວາທາທິກອນເປັນອັບພະຍາກະຕະ ເປັນແນວໃດ?

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸທັງຫຼາຍມີຈິດເປັນອັບພະຍາກະຕະ ຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ

ฯลฯ

໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ການກ່າວຕ່າງກັນ ການກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມໃຈ ຄວາມໝາຍໝັ້ນໃນເລື້ອງນັ້ນໃດ ນີ້ຮຽກວ່າ ວິວາທາທິກອນເປັນອັບພະຍາກະຕະ

[໔໔໑] ອະນຸວາທາທິກອນ ເປັນກຸສົນ ອະກຸສົນ ຫຼືອັບພະຍາກະຕະ ອະນຸວາທາທິກອນເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ

ບັນດາອະນຸວາທາທິກອນນັ້ນ ອະນຸວາທາທິກອນທີ່ເປັນກຸສົນ ເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍ ເປັນຜູ້ມີຈິດເປັນກຸສົນ ຍ່ອມໂຈດພິກຂຸ ດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມອຸດສາຫະໂຈດ ການຕາມເພີ່ມກຳລັງໃຫ້ໃນເລື້ອງນັ້ນໃດ ນີ້ຮຽກວ່າ ອະນຸວາທາທິກອນເປັນກຸສົນ

ບັນດາອະນຸວາທາທິກອນນັ້ນ ອະນຸວາທາທິກອນທີ່ເປັນອະກຸສົນ ເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍ ເປັນຜູ້ມີຈິດເປັນອະກຸສົນ ຍ່ອມໂຈດພິກຂຸດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມອຸດສາຫະໂຈດ ການຕາມເພີ່ມກຳລັງໃຫ້ ໃນເລື້ອງນັ້ນໃດ ນີ້ຮຽກວ່າ ອະນຸວາທາທິກອນເປັນອະກຸສົນ

ບັນດາອະນຸວາທາທິກອນນັ້ນ ອະນຸວາທາທິກອນທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍເປັນຜູ້ມີຈິດເປັນອັບພະຍາກະຕະ ຍ່ອມໂຈດພິກຂຸດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມອຸດສາຫະໂຈດ ການຕາມເພີ່ມກຳລັງໃຫ້ ໃນເລື້ອງນັ້ນໃດ ນີ້ຮຽກວ່າ ອະນຸວາທາທິກອນເປັນອັບພະຍາກະຕະ

[໘໘໘] ອາປັດຕາທິກອນເປັນອະກຸສົນ ຫຼືອັບພະຍາກະຕະ ອາປັດຕາທິກອນເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ ອາປັດຕາທິກອນເປັນກຸສົນບໍ່ມີ

ບັນດາອາປັດຕາທິກອນນັ້ນ ອາປັດຕາທິກອນທີ່ເປັນອະກຸສົນ ເປັນແນວໃດ?

ພິກຂຸຮູ້ຢູ່ ເຂົ້າໃຈຢູ່ ຈົງໃຈ ຝ່າຝືນ ລ່ວງລະເມີດອາບັດໃດ ນີ້ຮຽກວ່າ ອາປັດຕາທິກອນເປັນອະກຸສົນ

ບັນດາອາປັດຕາທິກອນນັ້ນ ອາປັດຕາທິກອນທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພິກຂຸບໍ່ຮູ້ ບໍ່ເຂົ້າໃຈ ບໍ່ຈົງໃຈ ບໍ່ຝ່າຝືນ ລ່ວງລະເມີດອາບັດໃດ ນີ້ຮຽກວ່າ ອາປັດຕາທິກອນ ເປັນອັບພະຍາກະຕະ

[໘໘໙] ກິດຈາທິກອນເປັນກຸສົນ ອະກຸສົນ ຫຼືອັບພະຍາກະຕະ ກິດຈາທິກອນເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ

ບັນດາກິດຈາທິກອນນັ້ນ ກິດຈາທິກອນທີ່ເປັນກຸສົນ ເປັນແນວໃດ?

ສົງມີຈິດເປັນກຸສົນ ເຮັດກຳໃດ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ນີ້ຮຽກວ່າ ກິດຈາທິກອນເປັນກຸສົນ

ບັນດາກິດຈາທິກອນນັ້ນ ກິດຈາທິກອນທີ່ເປັນອະກຸສົນ ເປັນແນວໃດ?

ສົງມີຈິດເປັນອະກຸສົນ ເຮັດກຳໃດ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ນີ້ຮຽກວ່າ ກິດຈາທິກອນເປັນອະກຸສົນ

ບັນດາກິດຈາທິກອນນັ້ນ ກິດຈາທິກອນທີ່ເປັນອັບພະຍາກະຕະ ເປັນແນວໃດ?

ສິ່ງມີຈິດເປັນອັບພະຍາກະຕະ ເຮັດກຳໃດ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ນີ້ຮຽກວ່າ ກິດຈາທິກອນເປັນອັບພະຍາກະຕະ

## ວິວາທາທິກອນ

[໔໔໔] ວິວາດເປັນວິວາທາທິກອນ ວິວາດບໍ່ເປັນອະທິກອນ ອະທິກອນບໍ່ເປັນວິວາດ ເປັນອະທິກອນດ້ວຍ ເປັນວິວາດດ້ວຍ ຫຼືວິວາດເປັນວິວາທາທິກອນກໍມີ ວິວາດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນວິວາດກໍມີ ເປັນອະທິກອນດ້ວຍ ເປັນວິວາດດ້ວຍກໍມີ

ບັນດາວິວາດນັ້ນ ວິວາດທີ່ເປັນວິວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍ ຍ່ອມຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ

ຯລຯ

໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ຄວາມກ່າວຕ່າງກັນ ຄວາມກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມໃຈ ຄວາມໝາຍໝັ້ນໃນເລື້ອງນັ້ນໃດ

ນີ້ຊື່ວ່າ ວິວາດເປັນວິວາທາທິກອນ

ບັນດາວິວາດນັ້ນ ວິວາດບໍ່ເປັນອະທິກອນ ເປັນແນວໃດ?

ມານດາຜິດຖຽງກັບບຸດແດ່ ບຸດຜິດຖຽງກັບມານດາແດ່ ບິດາຜິດຖຽງກັບບຸດແດ່ ບຸດຜິດຖຽງກັບບິດາແດ່ ອ້າຍຜິດຖຽງກັບນ້ອງຊາຍແດ່ ອ້າຍຜິດຖຽງກັບນ້ອງສາວແດ່ ນ້ອງສາວຜິດຖຽງກັບອ້າຍແດ່ ສະຫາຍຜິດຖຽງກັບສະຫາຍແດ່ ນີ້ຊື່ວ່າຜິດຖຽງ ບໍ່ເປັນອະທິກອນ

ບັນດາວິວາດນັ້ນ ອະທິກອນບໍ່ເປັນວິວາດ ເປັນແນວໃດ?

ອະນຸວາທາທິກອນ ອາປັດຕາທິກອນ ກິດຈາທິກອນ ນີ້ຊື່ວ່າອະທິກອນ ບໍ່ເປັນວິວາດ

ບັນດາວິວາດນັ້ນ ອະທິກອນເປັນອະທິກອນດ້ວຍ ເປັນວິວາດດ້ວຍເປັນແນວໃດ?

ວິວາທາທິກອນເປັນອະທິກອນດ້ວຍ ເປັນວິວາດດ້ວຍ

## ອະນຸວາທາທິກອນ

[໔໔໕] ການໂຈດເປັນອະນຸວາທາທິກອນ ການໂຈດບໍ່ເປັນອະທິກອນ ອະທິກອນບໍ່ເປັນການໂຈດ ເປັນອະທິກອນດ້ວຍ ເປັນການໂຈດດ້ວຍ ຫຼື ການໂຈດເປັນອະນຸວາທາທິກອນກໍມີ

ການໂຈດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນການໂຈດກໍມີ ເປັນອະທິກອນດ້ວຍ ເປັນການໂຈດ ດ້ວຍກໍມີ

ບັນດາການໂຈດນັ້ນ ການໂຈດທີ່ເປັນອະນຸວາທາທິກອນ ເປັນແນວໃດ?

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍຍ່ອມໂຈດພິກຂຸດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມອຸດສາຫະໂຈດ ການຕາມເພີ່ມກຳລັງໃຫ້ ໃນເລື້ອງນັ້ນໃດ ນີ້ຊື່ວ່າ ການໂຈດເປັນອະນຸວາທາທິກອນ

ບັນດາການໂຈດນັ້ນ ການໂຈດທີ່ບໍ່ເປັນອະທິກອນ ເປັນແນວໃດ?

ມານດາກ່າວຫາບຸດແດ່ ບຸດກ່າວຫາມານດາແດ່ ບິດາກ່າວຫາບຸດແດ່ ບຸດກ່າວຫາບິດາແດ່ ອ້າຍກ່າວຫານ້ອງຊາຍແດ່ ອ້າຍກ່າວຫານ້ອງສາວແດ່ ນ້ອງສາວກ່າວຫາອ້າຍແດ່ ສະຫາຍະກ່າວຫາສະຫາຍແດ່ ນີ້ຊື່ວ່າ ການໂຈດບໍ່ເປັນອະທິກອນ

ບັນດາອະທິກອນນັ້ນ ອະທິກອນທີ່ບໍ່ເປັນການໂຈດ ເປັນແນວໃດ?

ອາປັດຕາທິກອນ ກິດຈາທິກອນ ວິວາທາທິກອນ ນີ້ຊື່ວ່າ ອະທິກອນບໍ່ເປັນການໂຈດ

ບັນດາອະທິກອນນັ້ນ ອະທິກອນທີ່ເປັນອະທິກອນດ້ວຍ ເປັນການໂຈດດ້ວຍເປັນແນວໃດ?

ອະນຸວາທາທິກອນເປັນອະທິກອນດ້ວຍ ເປັນການໂຈດດ້ວຍ

## ອາປັດຕາທິກອນ

[໘໘໓] ອາບັດເປັນອາປັດຕາທິກອນ ອາບັດບໍ່ເປັນອະທິກອນ ອະທິກອນບໍ່ເປັນອາບັດ ເປັນອະທິກອນດ້ວຍ ເປັນອາບັດດ້ວຍ ອາບັດເປັນອາປັດຕາທິກອນກໍມີ ອາບັດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນອາບັດກໍມີ ເປັນອະທິກອນດ້ວຍ ເປັນອາບັດດ້ວຍກໍມີ

ບັນດາອະທິກອນນັ້ນ ອາບັດເປັນອາປັດຕາທິກອນ ເປັນແນວໃດ?

ອາບັດ ໕ ກອງເປັນອາປັດຕາທິກອນແດ່ ອາບັດ ໗ ກອງເປັນອາປັດຕາທິກອນແດ່ ນີ້ຊື່ວ່າ ອາບັດເປັນອາປັດຕາທິກອນ

ບັນດາອາບັດນັ້ນ ອາບັດທີ່ບໍ່ເປັນອະທິກອນ ເປັນແນວໃດ?

ໂສຕາບັດ ສະມາບັດ ນີ້ຊື່ວ່າ ອາບັດບໍ່ເປັນອະທິກອນ

ບັນດາອະທິກອນນັ້ນ ອະທິກອນທີ່ບໍ່ເປັນອາບັດ ເປັນແນວໃດ?

ກິດຈາທິກອນ ວິວາທາທິກອນ ອະນຸວາທາທິກອນ ນີ້ຊື່ວ່າ ອະທິກອນບໍ່ເປັນອາບັດ

ບັນດາອະທິກອນນັ້ນ ອະທິກອນທີ່ເປັນອະທິກອນດ້ວຍ ເປັນອາບັດດ້ວຍ ເປັນແນວໃດ?
ອາປັດຕາທິກອນ ເປັນອະທິກອນດ້ວຍ ເປັນອາບັດດ້ວຍ

[໔໔໗] ກິດເປັນກິດຈາທິກອນ ກິດບໍ່ເປັນອະທິກອນ ອະທິກອນບໍ່ເປັນກິດ ເປັນອະທິກອນດ້ວຍ ເປັນກິດດ້ວຍ ຫຼືກິດເປັນກິດຈາທິກອນກໍມີ ກິດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນກິດກໍມີ ເປັນອະທິກອນດ້ວຍ ເປັນກິດດ້ວຍກໍມີ

ບັນດາອະທິກອນນັ້ນ ກິດເປັນກິດຈາທິກອນ ເປັນແນວໃດ?
ຄວາມເປັນໜ້າທີ່ ຄວາມເປັນກະຣະນີຍະແຫ່ງສິ່ງໃດ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ນີ້ຊື່ວ່າ ກິດເປັນກິດຈາທິກອນ

ບັນດາອະທິກອນນັ້ນ ກິດບໍ່ເປັນອະທິກອນ ເປັນແນວໃດ?
ກິດທີ່ຈະຕ້ອງເຮັດແກ່ພຣະອາຈານ ກິດທີ່ຈະຕ້ອງເຮັດແກ່ພຣະອຸປັດຊາ ກິດທີ່ຈະຕ້ອງເຮັດແກ່ພິກຂຸຜູ້ສະເໝີອຸປັດຊາ ກິດທີ່ຈະຕ້ອງເຮັດແກ່ພິກຂຸຜູ້ສະເໝີພຣະອາຈານ ນີ້ຊື່ວ່າ ກິດບໍ່ເປັນອະທິກອນ

ບັນດາອະທິກອນນັ້ນ ອະທິກອນບໍ່ເປັນກິດ ເປັນແນວໃດ?
ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ນີ້ຊື່ວ່າ ອະທິກອນບໍ່ເປັນກິດ

ບັນດາອະທິກອນນັ້ນ ອະທິກອນທີ່ເປັນອະທິກອນດ້ວຍ ເປັນກິດດ້ວຍ ເປັນແນວໃດ?
ກິດຈາທິກອນເປັນອະທິກອນດ້ວຍ ເປັນກິດດ້ວຍ

**ອະທິກະຣະນະ ຈົບ**

# ໙. ອະທິກະຣະນະວູປະສະມະນະສະມະຖະ

# ວ່າດ້ວຍການລະງັບອະທິກອນ

## ສຳມຸຂາວິໄນ

## ວິວາທາທິກອນລະງັບດ້ວຍສະມະຖະ ໒ ຢ່າງ

[໔໔໘] ວິວາທາທິກອນຍ່ອມລະງັບດ້ວຍສະມະຖະທີ່ໃດ
ວິວາທາທິກອນ ຍ່ອມລະງັບດ້ວຍສະມະຖະ ໒ ຄື (໑) ສຳມຸຂາວິໄນ (໒) ເຍພຸຍຍະສິກາ

ບາງເທື່ອວິວາທາທິກອນບໍ່ອາໄສສະມະຖະແນວໜຶ່ງ ຄື ເຍພຸຍຍະສິກາ ເພິ່ງລະງັບດ້ວຍສະມະຖະແນວດຽວ ຄື ສຳມຸຂາວິໄນ ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທັງຫຼາຍ ຍ່ອມຜິດຖຽງກັນວ່າ

໑. ນີ້ທຳ ນີ້ອະທຳ
໒. ນີ້ວິໄນ ນີ້ບໍ່ແມ່ນວິໄນ
໓. ນີ້ຕະຖາຄົດພາສິດໄວ້ ຕັດໄວ້ ນີ້ຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້
໔. ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດໄດ້ປະພຶດມາ ນີ້ຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາ
໕. ນີ້ຕະຖາຄົດຊົງບັນຍັດໄວ້ ນີ້ຕະຖາຄົດບໍ່ໄດ້ຊົງບັນຍັດໄວ້
໖. ນີ້ອາບັດ ນີ້ອະນາບັດ
໗. ນີ້ອາບັດເບົາ ນີ້ອາບັດໜັກ
໘. ນີ້ອາບັດມີສ່ວນເຫຼືອ ນີ້ອາບັດບໍ່ມີສ່ວນເຫຼືອ
໙. ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ

ພິກຂຸທັງຫຼາຍ ຖ້າພິກຂຸພວກນັ້ນສາມາດລະງັບອະທິກອນນັ້ນໄດ້ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?

ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນ ມີອັນໃດແດ່?

ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ

ອັນໜຶ່ງ ຄວາມພ້ອມໜ້າສົງ ໃນສຳມຸຂາວິໄນນັ້ນແນວໃດ?

ພິກຂຸຜູ້ເຂົ້າກຳມີຈຳນວນທໍ່ໃດ ພິກຂຸເຫຼົ່ານັ້ນມາປະຊຸມກັນ ນຳສັນທະຂອງຜູ້ຄວນສັນທະມາ ຜູ້ຢູ່ພ້ອມໜ້າກັນບໍ່ຄັດຄ້ານ ນີ້ຊື່ວ່າ ຄວາມພ້ອມໜ້າສົງໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ໃນສຳມຸຂາວິໄນນັ້ນແນວໃດ?

ອະທິກອນນັ້ນລະງັບໂດຍທຳ ໂດຍວິໄນແລະໂດຍສັດຖຸສາດໃດ ນີ້ຊື່ວ່າ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນແນວໃດ?

ໂຈດແລະຈຳເລີຍທັງສອງ ເປັນຄູ່ຕໍ່ສູ້ໃນຄະດີຢູ່ພ້ອມໜ້າກັນ ນີ້ຊື່ວ່າ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແບບນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕິທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕິທີ່ຕິຕຽນ

[໔໔໙] ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນບໍ່ສາມາດລະງັບອະທິກອນນັ້ນໃນອາວາດນັ້ນໄດ້ ພວກທ່ານເພິ່ງໄປສູ່ອາວາດທີ່ມີພິກຂຸຫຼາຍກວ່າ ຖ້າພວກທ່ານກຳລັງໄປສູ່ອາວາດນັ້ນສາມາດລະງັບອະທິກອນນັ້ນໄດ້ໃນລະຫວ່າງທາງ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?
ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນ ມີອັນໃດແດ່?
ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ

ອັນໜຶ່ງ ຄວາມພ້ອມໜ້າສົງ ໃນສຳມຸຂາວິໄນນັ້ນແນວໃດ?
ພິກຂຸຜູ້ເຂົ້າກຳມີຈຳນວນທໍ່ໃດ ພິກຂຸເຫຼົ່ານັ້ນມາປະຊຸມກັນ ນຳສັນທະຂອງຜູ້ຄວນສັນທະມາ ຜູ້ຢູ່ພ້ອມໜ້າກັນບໍ່ຄັດຄ້ານ ນີ້ຊື່ວ່າ ຄວາມພ້ອມໜ້າສົງໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ໃນສຳມຸຂາວິໄນນັ້ນແນວໃດ?
ອະທິກອນນັ້ນລະງັບໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດໃດ ນີ້ຊື່ວ່າ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນແນວໃດ?
ໂຈດແລະຈຳເລີຍທັງສອງ ເປັນຄູ່ຕໍ່ສູ້ໃນຄະດີຢູ່ພ້ອມໜ້າກັນ ນີ້ຊື່ວ່າ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແບບນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕິທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕິທີ່ຕິຕຽນ

[໔໓໐] ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນກຳລັງໄປສູ່ອາວາດນັ້ນ ບໍ່ສາມາດລະງັບອະທິກອນນັ້ນໃນລະຫວ່າງທາງໄດ້ ພວກທ່ານໄປເຖິງອາວາດນັ້ນແລ້ວ ເພິ່ງກ່າວກັບພິກຂຸທີ່ຢູ່ປະຈຳໃນອາວາດວ່າ "ທ່ານທັງຫຼາຍ ອະທິກອນນີ້ເກີດແລ້ວແບບນີ້ ອຸບັດແລ້ວແບບນີ້

ຂໍໂອກາດທ່ານທັງຫຼາຍ ຈົ່ງລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ຕາມວິທີທີ່ອະທິກອນນີ້ຈະລະງັບດ້ວຍດີ

ພິກຂຸທັງຫຼາຍ ຖ້າພວກພິກຂຸທີ່ຢູ່ປະຈຳໃນອາວາດເປັນຜູ້ແກ່ພັນສາກວ່າ ພວກພິກຂຸອາຄັນຕຸກະອ່ອນພັນສາກວ່າ ພວກທ່ານເພິ່ງກ່າວກັບພິກຂຸອາຄັນຕຸກະວ່າ "ທ່ານທັງຫຼາຍ ຂໍນິມົນທ່ານທັງຫຼາຍຈົ່ງລວມຢູ່ທີ່ສົມຄວນຈັກໜ້ອຍໜຶ່ງ ຕະຫຼອດເວລາທີ່ພວກຂ້ານ້ອຍຈະເປີກສາກັນ" ແຕ່ຖ້າພວກພິກຂຸທີ່ຢູ່ປະຈຳໃນອາວາດເປັນຜູ້ອ່ອນກວ່າ ພວກພິກຂຸອາຄັນຕຸກະແກ່ກວ່າ ພວກທ່ານເພິ່ງກ່າວກັບພິກຂຸອາຄັນຕຸກະວ່າ "ທ່ານທັງຫຼາຍ ຖ້າເປັນແນວນັ້ນ ຂໍທ່ານທັງຫຼາຍຈົ່ງຢູ່ທີ່ນີ້ຈັກໜ້ອຍໜຶ່ງຈົນກວ່າພວກຂ້ານ້ອຍຈະເປີກສາກັນ

ພິກຂຸທັງຫຼາຍ ຖ້າພວກພິກຂຸທີ່ຢູ່ປະຈຳໃນອາວາດກຳລັງເປີກສາ ຄິດກັນແນວນີ້ວ່າ "ພວກເຮົາບໍ່ສາມາດລະງັບອະທິກອນນີ້ໂດຍທຳ ໂດຍວິໄນແລະໂດຍສັດຖຸສາດ" ພວກທ່ານ ບໍ່ເພິ່ງຮັບອະທິກອນນັ້ນໄວ້ ແຕ່ຖ້າກຳລັງເປີກສາ ຄິດກັນແນວນີ້ວ່າ "ພວກເຮົາສາມາດລະງັບອະທິກອນນີ້ໄດ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ" ພວກທ່ານເພິ່ງກ່າວກັບພວກພິກຂຸອາຄັນຕຸກະວ່າ "ທ່ານທັງຫຼາຍ ຖ້າພວກທ່ານຈັກແຈ້ງອະທິກອນນີ້ຕາມທີ່ເກີດແລ້ວ ຕາມທີ່ອຸບັດ ແລ້ວແກ່ພວກເຮົາ ຄືກັບພວກເຮົາຈັກລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ສັນໃດ ອະທິກອນນີ້ຈັກລະງັບດ້ວຍດີສັນນັ້ນ ແນວນີ້ພວກເຮົາຈຶ່ງຈັກຮັບອະທິກອນນີ້ ຖ້າພວກທ່ານຈັກບໍ່ແຈ້ງອະທິກອນນີ້ຕາມທີ່ເກີດແລ້ວ ຕາມທີ່ອຸບັດແລ້ວແກ່ພວກເຮົາ ຄືກັບທີ່ພວກເຮົາຈັກລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ສັນໃດ ອະທິກອນນີ້ ຈັກບໍ່ລະງັບດ້ວຍດີສັນນັ້ນ ພວກເຮົາຈັກບໍ່ຮັບອະທິກອນນີ້

ພິກຂຸທັງຫຼາຍ ພວກພິກຂຸທີ່ຢູ່ປະຈຳໃນອາວາດເພິ່ງຮອບຄອບແນວນີ້ແລ້ວຮັບອະທິກອນນັ້ນໄວ້ ພວກພິກຂຸອາຄັນຕຸກະນັ້ນ ເພິ່ງກ່າວກັບພວກພິກຂຸທີ່ຢູ່ປະຈຳໃນອາວາດວ່າ "ພວກຂ້ານ້ອຍ ຈັກແຈ້ງອະທິກອນນີ້ຕາມທີ່ເກີດແລ້ວ ຕາມທີ່ອຸບັດແລ້ວແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍສາມາດລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ລະຫວ່າງເວລາທີ່ນີ້ໄດ້ ອະທິກອນຈັກລະງັບດ້ວຍດີເຊັ່ນວ່ານັ້ນ ແນວນີ້ ພວກຂ້ານ້ອຍຈັກມອບອະທິກອນແກ່ທ່ານທັງຫຼາຍ ຖ້າທ່ານທັງຫຼາຍບໍ່ສາມາດລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ລະຫວ່າງເວລາທີ່ນີ້ໄດ້ ອະທິກອນຈັກບໍ່ລະງັບດ້ວຍດີເຊັ່ນວ່ານັ້ນ ພວກຂ້ານ້ອຍຈັກບໍ່ມອບອະທິກອນນີ້ ແກ່ທ່ານທັງຫຼາຍ ພວກຂ້ານ້ອຍນີ້ແລຈັກເປັນເຈົ້າຂອງອະທິກອນນີ້

ພິກຂຸທັງຫຼາຍ ພວກພິກຂຸອາຄັນຕຸກະເພິ່ງຮອບຄອບແນວນີ້ ແລ້ວຈຶ່ງມອບອະທິກອນນັ້ນແກ່ພວກພິກຂຸທີ່ຢູ່ປະຈຳໃນອາວາດ

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນສາມາດລະງັບອະທິກອນນັ້ນໄດ້ ນີ້ຮຽກວ່າ ອະທິກອນລະງັບດີແລ້ວ

ອະທິກອນລະງັບດ້ວຍອັນໃດ?
ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນ ມີອັນໃດແດ່ ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຽນ ຕ້ອງອາບັດປາຈິດຕີທີ່ຕິຽນ

## ອຸບພາຫິກາຍະວູປະສະມະນະ

## ວ່າດ້ວຍການລະງັບອະທິກອນດ້ວຍອຸບພາຫິກະວິທີ[๑]

[໒໓໑] ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນວິນິດໄສອະທິກອນນັ້ນຢູ່ ມີສຽງເຊັງແຊ່ເກີດຂຶ້ນບໍ່ມີທີ່ສິ້ນສຸດແລະບໍ່ມີໃຜຮູ້ຄວາມແຫ່ງຄຳເວົ້າທີ່ກ່າວແລ້ວນັ້ນ ເຮົາອະນຸຍາດ ໃຫ້ລະງັບອະທິກອນປານນີ້ດ້ວຍອຸບພາຫິກະວິທີ ພິກຂຸຜູ້ປະກອບດ້ວຍອົງຄຸນ ໑໐ ປະການ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກະວິທີ ຄື

໑. ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ເຖິງພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດມີປະມານເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ທຳເຫຼົ່ານັ້ນໃດ ທີ່ງາມໃນເບື້ອງຕົ້ນ ງາມໃນທ່າມກາງ ແລະງາມໃນບ່ອນສຸດ ຍ່ອມສັນເສີນພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ທຳທັງຫຼາຍ ເຫັນປານນັ້ນ ຍ່ອມເປັນອັນທ່ານສະດັບຫຼາຍ ຊົງໄວ້ ສັ່ງສົມດ້ວຍວາຈາເຂົ້າໄປ ເພ່ງດ້ວຍໃຈ ປະຈັກແຈ້ງດີແລ້ວດ້ວຍທິດຖິ
໓. ຈຳປາຕິໂມກທັງ ໒ ໄດ້ດີໂດຍພິດສະດານ ຈຳແນກດີ ສູດດີ ວິນິດໄສຖືກຕ້ອງໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ຕັ້ງໝັ້ນໃນພຣະວິໄນ ບໍ່ຄອນແຄນ
໕. ເປັນຜູ້ອາດຊີ້ແຈ່ງໃຫ້ຄູ່ຕໍ່ສູ້ໃນອະທິກອນຍິນຍອມ ເຂົ້າໃຈ ເພ່ງ ເຫັນ ເຫຼື້ອມໃສ
໖. ເປັນຜູ້ສະຫຼາດເພື່ອຍັງອະທິກອນອັນເກີດຂຶ້ນໃຫ້ລະງັບ

໗. ຮູ້ອະທິກອນ
໘. ຮູ້ເຫດເກີດອະທິກອນ
໙. ຮູ້ຄວາມລະງັບແຫ່ງອະທິກອນ
໑໐. ຮູ້ທາງລະງັບອະທິກອນ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍອົງຄຸນ ໑໐ ນີ້ ດ້ວຍອຸບພາທິກະວິທີ

## ວິທີແຕ່ງຕັ້ງ ແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງພິກຂຸນັ້ນແບບນີ້ ຄື ເບື້ອງຕົ້ນເພິ່ງຂໍຮ້ອງພິກຂຸ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໔໓໔] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພວກເຮົາວິນິດໄສອະທິກອນນີ້ຢູ່ ມີສຽງຜິດພື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດ ແລະບໍ່ມີໃຜຮູ້ຄວາມແຫ່ງຄຳເວົ້າທີ່ກ່າວແລ້ວນັ້ນ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ດ້ວຍ ຊື່ນີ້ດ້ວຍ ເພື່ອລະງັບອະທິກອນນີ້ ດ້ວຍອຸບພາທິກະວິທີ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ເມື່ອພວກເຮົາວິນິດໄສອະທິກອນນີ້ຢູ່ ມີສຽງຜິດພື້ນເກີດຂຶ້ນບໍ່ມີທີ່ສິ້ນສຸດ ແລະບໍ່ມີໃຜຮູ້ຄວາມແຫ່ງຄຳເວົ້າທີ່ກ່າວແລ້ວນັ້ນ ສົງແຕ່ງຕັ້ງພິກຂຸຊື່ນີ້ດ້ວຍ ຊື່ນີ້ດ້ວຍ ເພື່ອລະງັບອະທິກອນນີ້ ດ້ວຍອຸບພາທິກະວິທີ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ດ້ວຍ ຊື່ນີ້ດ້ວຍ ເພື່ອລະງັບອະທິກອນນີ້ ດ້ວຍອຸບພາທິກະວິທີ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ດ້ວຍ ຊື່ນີ້ດ້ວຍ ສົງແຕ່ງຕັ້ງແລ້ວ ເພື່ອລະງັບອະທິກອນນີ້ ດ້ວຍອຸບພາທິກະວິທີ ສົງເຫັນດ້ວຍ ຍ້ອນແບບນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນສາມາດລະງັບອະທິກອນນັ້ນດ້ວຍອຸບພາທິກະວິທີ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?
ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນມີອັນໃດແດ່?
ມີຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ໗໘໗

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

[໔໓໓] ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນວິນິດໄສອະທິກອນນັ້ນຢູ່ ໃນບໍລິສັດນັ້ນເກີດມີພິກຂຸທຳມະກະຖຶກ ພິກຂຸນັ້ນຈື່ສູດບໍ່ໄດ້ເລີຍ ຈື່ວິພັງແຫ່ງສູດກໍບໍ່ໄດ້ ພິກຂຸນັ້ນ ບໍ່ໄດ້ສັງເກດໃຈຄວາມ ຍ່ອມຄ້ານໃຈຄວາມຕາມເຄົ້າພະຍັນຊະນະ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ພິກຂຸເຫຼົ່ານັ້ນຮູ້ດ້ວຍຍັດຕິກຳມະວາຈາ

## ຍັດຕິກຳມະວາຈາ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນທຳມະກະຖຶກ ທ່ານຈື່ສູດບໍ່ໄດ້ເລີຍ ຈື່ວິພັງແຫ່ງສູດກໍບໍ່ໄດ້ ທ່ານບໍ່ໄດ້ສັງເກດໃຈຄວາມ ຍ່ອມຄ້ານໃຈຄວາມຕາມເຄົ້າພະຍັນຊະນະ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ພວກເຮົາເພິ່ງຂັບພິກຂຸຊື່ນີ້ໃຫ້ອອກໄປແລ້ວທີ່ເຫຼືອເພິ່ງລະງັບອະທິກອນນີ້

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນຂັບພິກຂຸນັ້ນອອກໄປແລ້ວ ສາມາດລະງັບອະທິກອນນັ້ນໄດ້ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?
ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນມີອັນໃດແດ່?
ມີຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ฯລฯ
ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນວິນິດໄສອະທິກອນນັ້ນຢູ່ ໃນບໍລິສັດນັ້ນເກີດມີພິກຂຸທຳມະກະຖຶກ ທ່ານຈື່ສູດໄດ້ ແຕ່ຈື່ວິພັງແຫ່ງສູດບໍ່ໄດ້ເລີຍ ທ່ານບໍ່ໄດ້ສັງເກດໃຈຄວາມ ຍ່ອມຄ້ານໃຈຄວາມຕາມເຄົ້າພະຍັນຊະນະ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ພິກຂຸເຫຼົ່ານັ້ນ ຮູ້ດ້ວຍຄະນະຍັດຕິວ່າ

## ຍັດຕິກຳມະວາຈາ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ເປັນທຳມະກະຖຶກ ທ່ານຈື່ສູດໄດ້ແຕ່ ຈື່ວິພັງແຫ່ງສູດບໍ່ໄດ້ເລີຍ ທ່ານບໍ່ສັງເກດໃຈຄວາມ ຍ່ອມຄ້ານໃຈຄວາມຕາມເຄົ້າພະຍັນຊະນະ ຖ້າ

ທ່ານທັງຫຼາຍພ້ອມກັນແລ້ວ ພວກເຮົາເພິ່ງຂັບພິກຂຸຊື່ນີ້ໃຫ້ອອກໄປ ແລ້ວທີ່ເຫຼືອເພິ່ງລະງັບ ອະທິກອນນີ້

ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນຂັບພິກຂຸນັ້ນອອກໄປແລ້ວ ສາມາດລະງັບອະທິກອນນັ້ນໄດ້ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?
ດ້ວຍສຳມຸຂາວິໄນ

ໃນສຳມຸຂາວິໄນນັ້ນມີອັນໃດແດ່?
ມີຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ
ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແບບນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ ຮື້ຟື້ນ

## ເຍພຸຍຍະສິກາວິໄນ

[໔໓໔] ພິກຂຸທັງຫຼາຍ ຖ້າພິກຂຸເຫຼົ່ານັ້ນບໍ່ສາມາດລະງັບອະທິກອນນັ້ນດ້ວຍອຸບພາທິກະວິທີ ພິກຂຸເຫຼົ່ານັ້ນເພິ່ງມອບອະທິກອນນັ້ນແກ່ສົງວ່າ "ທ່ານຜູ້ຈະເລີນ ພວກຂ້າພະເຈົ້າ ບໍ່ສາມາດລະງັບອະທິກອນນີ້ດ້ວຍອຸບພາທິກະວິທີ ຂໍສົງນັ້ນແລຈົ່ງລະງັບອະທິກອນນີ້

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລະງັບອະທິກອນປານນີ້ດ້ວຍເຍພຸຍຍະສິກາ ເພິ່ງແຕ່ງຕັ້ງພິກຂຸຜູ້ປະກອບດ້ວຍອົງຄຸນ ໕ ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ຄື

໑. ບໍ່ລຳອຽງຍ້ອນຮັກ
໔. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ເພິ່ງຮູ້ຈັກສະຫຼາກທີ່ຈັບແລ້ວແລະຍັງບໍ່ຈັບ ຯລຯ

## ວິທີແຕ່ງຕັ້ງແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ຄື ເບື້ອງຕົ້ນເພິ່ງຂໍໃຫ້ພິກຂຸຮັບ ບັດແລ້ວ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວເພິ່ງແຕ່ງຕັ້ງພິກຂຸຊື່ນີ້ ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນຜູ້ໃຫ້ຈັບສະຫຼາກ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ພິກຂຸຊື່ນີ້ ສົງແຕ່ງຕັ້ງໃຫ້ເປັນຜູ້ໃຫ້ຈັບສະຫຼາກແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸຜູ້ໃຫ້ຈັບສະຫຼາກນັ້ນເພິ່ງໃຫ້ພິກຂຸທັງຫຼາຍຈັບສະຫຼາກ ພວກທຳມະວາທີພິກຂຸຫຼາຍກວ່າ ຍ່ອມກ່າວສັນໃດ ເພິ່ງລະງັບອະທິກອນນັ້ນສັນນັ້ນ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?

ດ້ວຍສຳມຸຂາວິໄນ ແລະເຍພຸຍຍະສິກາ

ໃນສຳມຸຂາວິໄນນັ້ນມີອັນໃດແດ່?

ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ

ອັນໜຶ່ງ ຄວາມພ້ອມໜ້າສົງ ໃນສຳມຸຂາວິໄນນັ້ນແນວໃດ?

ພິກຂຸຜູ້ເຂົ້າກຳມີຈຳນວນທໍ່ໃດ ພິກຂຸເຫຼົ່ານັ້ນມາປະຊຸມກັນ ນຳສັນທະຂອງຜູ້ຄວນສັນທະມາ ຜູ້ຢູ່ພ້ອມໜ້າກັນບໍ່ຄັດຄ້ານ ນີ້ຊື່ວ່າ ຄວາມພ້ອມໜ້າສົງ ໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ໃນສຳມຸຂາວິໄນນັ້ນແນວໃດ?

ອະທິກອນນັ້ນລະງັບໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດໃດ ນີ້ຊື່ວ່າ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນແນວໃດ?

ໂຈດແລະຈຳເລີຍທັງສອງ ເປັນຄູ່ຕໍ່ສູ້ໃນຄະດີຢູ່ພ້ອມໜ້າກັນ ນີ້ຊື່ວ່າ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ໃນເຍພຸຍຍະສິການັ້ນມີອັນໃດແດ່

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳໃນເຍພຸຍຍະສິກາອັນໃດ ມີໃນເຍພຸຍຍະສິການັ້ນ

ພິກຂຸທັງຫຼາຍ ອະທິກອນລະງັບແນວນີ້ ຜູ້ເຮັດຮື້ຟື້ນຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕີທີ່ຕິຕຽນ

## ຕິວິທະສະຫຼາກະຄາທະ

## ວ່າດ້ວຍການຈັບສະຫຼາກ ၁ ວິທີ

[໔၁໕] ສະໄໝນັ້ນ ອະທິກອນເກີດແລ້ວແບວນີ້ ອຸບັດແລ້ວແບວນີ້ ໃນນະຄອນສາວັດຖີ ພິກຂຸເຫຼົ່ານັ້ນບໍ່ພໍໃຈດ້ວຍການລະງັບອະທິກອນຂອງສົງໃນນະຄອນສາວັດຖີ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນ ມີພຣະເຖຣະຢູ່ຫຼາຍຣູບ ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຖ້າພຣະເຖຣະເຫຼົ່ານັ້ນເພິ່ງລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ແບວນີ້ອະທິກອນນີ້ເພິ່ງລະງັບດ້ວຍດີ" ຈຶ່ງໄປສູ່ອາວາດນັ້ນແລ້ວຮຽນກັບພຣະເຖຣະພວກນັ້ນວ່າ "ທ່ານຜູ້ຈະເລີນ ອະທິກອນນີ້ເກີດແລ້ວແບວນີ້ ອຸບັດແລ້ວແບວນີ້ ຂໍໂອກາດຂ້ານ້ອຍຂໍພຣະເຖຣະທັງຫຼາຍຈົ່ງລະງັບອະທິກອນນີ້ ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ຕາມວິທີທີ່ອະທິກອນນີ້ເພິ່ງລະງັບດ້ວຍດີ

ພຣະເຖຣະພວກນັ້ນຊ່ອຍລະງັບອະທິກອນນັ້ນແລ້ວ ຄືກັບທີ່ສົງໃນນະຄອນສາວັດຖີລະງັບແລ້ວ ຕາມວິທີທີ່ລະງັບດ້ວຍດີແລ້ວສັນນັ້ນ ຄັ້ງນັ້ນ ພິກຂຸຜູ້ບໍ່ຍິນດີ ບໍ່ພໍໃຈ ດ້ວຍການລະງັບອະທິກອນຂອງສົງໃນນະຄອນສາວັດຖີນັ້ນ ບໍ່ພໍໃຈດ້ວຍການລະງັບອະທິກອນຂອງພຣະເຖຣະຫຼາຍອົງ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນ ມີພຣະເຖຣະຢູ່ ၁ ອົງ ຯລຯ ມີພຣະເຖຣະຢູ່ ໔ ອົງ ຯລຯ ມີພຣະເຖຣະຢູ່ອົງດຽວ ເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຖ້າພຣະເຖຣະນັ້ນເພິ່ງລະງັບອະທິກອນນີ້ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ແບວນີ້ອະທິກອນນີ້ເພິ່ງລະງັບດ້ວຍດີ" ຈຶ່ງໄປສູ່ອາວາດນັ້ນ ແລ້ວຂາບຮຽນພຣະເຖຣະນັ້ນວ່າ "ທ່ານຂ້ານ້ອຍ ອະທິກອນນີ້ເກີດແລ້ວແບວນີ້ ອຸບັດແລ້ວແບວນີ້ ຂໍໂອກາດຂ້ານ້ອຍ ຂໍພຣະເຖຣະ ຈົ່ງລະງັບອະທິກອນນີ້ ໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດ ຕາມວິທີທີ່ອະທິກອນນີ້ ຈະເພິ່ງລະງັບດ້ວຍດີ

ພຣະເຖຣະນັ້ນຊ່ອຍລະງັບອະທິກອນນັ້ນແລ້ວ ຄືກັບທີ່ສົງໃນນະຄອນສາວັດຖີລະງັບແລ້ວ ຄືກັບທີ່ພຣະເຖຣະຫຼາຍອົງລະງັບແລ້ວ ຄືກັບທີ່ພຣະເຖຣະ ၁ ອົງລະງັບແລ້ວແລະຄືກັບທີ່ພຣະເຖຣະ ໔ ອົງລະງັບແລ້ວ ຕາມວິທີທີ່ລະງັບດ້ວຍດີແລ້ວ ສັນນັ້ນ

ຄັ້ງນັ້ນ ພວກພິກຂຸເຫຼົ່ານັ້ນຜູ້ທີ່ບໍ່ພໍໃຈດ້ວຍການລະງັບອະທິກອນຂອງສົງໃນນະຄອນສາວັດຖີ ບໍ່ພໍໃຈດ້ວຍການລະງັບອະທິກອນຂອງພຣະເຖຣະຫຼາຍອົງ ບໍ່ພໍໃຈດ້ວຍການລະງັບ ອະທິກອນຂອງພຣະເຖຣະ ၁ ອົງ ບໍ່ພໍໃຈດ້ວຍການລະງັບອະທິກອນຂອງພຣະເຖຣະ ໔ ອົງ ບໍ່ພໍໃຈ

ດ້ວຍການລະງັບອະທິກອນຂອງພຣະເຖຣະອົງດຽວ ແລ້ວຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ອະທິກອນທີ່ພິຈາລະນາແລ້ວນັ້ນເປັນອັນສະງົບລະງັບ ລະງັບດີແລ້ວ ພິກຂຸທັງຫຼາຍ ເຮົາອະນຸຍາດວິທີຈັບສະຫຼາກ ໓ ຢ່າງ ຄື ປົກປິດ ໑ ຊິ່ມບອກ ໑ ເປີດເຜີຍ ໑ ຕາມຄວາມຍິນຍອມຂອງພິກຂຸພວກນັ້ນ"

ພິກຂຸທັງຫຼາຍ ອັນໜຶ່ງ ວິທີຈັບສະຫຼາກປົກປິດ ເປັນແນວໃດ?

ພິກຂຸຜູ້ໃຫ້ຈັບສະຫຼາກນັ້ນເພິ່ງເຮັດສະຫຼາກໃຫ້ມີສີ ແລະບໍ່ມີສີ ແລ້ວເຂົ້າໄປຫາພິກຂຸເທື່ອລະອົງ ໆ ແລ້ວແນະນຳແນວນີ້ວ່າ "ນີ້ສະຫຼາກຂອງຜູ້ກ່າວແນວນີ້ ນີ້ສະຫຼາກຂອງຜູ້ກ່າວແນວນີ້ ທ່ານຈົ່ງຈັບສະຫຼາກທີ່ພໍໃຈ" ເມື່ອພິກຂຸນັ້ນຈັບແລ້ວ ເພິ່ງແນະນຳວ່າ "ທ່ານຢ່າສະແດງແກ່ໃຜ ໆ" ຖ້າຮູ້ວ່າ "ອະທຳມະວາທີຫຼາຍກວ່າ" ເພິ່ງບອກວ່າ "ສະຫຼາກຈັບບໍ່ດີ" ແລ້ວໃຫ້ຈັບໃໝ່ ຖ້າຮູ້ວ່າ "ທຳມະວາທີຫຼາຍກວ່າ" ເພິ່ງປະກາດວ່າ "ສະຫຼາກຈັບດີແລ້ວ" ພິກຂຸທັງຫຼາຍ ວິທີຈັບສະຫຼາກ ປົກປິດເປັນແນວນີ້ແລ

ພິກຂຸທັງຫຼາຍ ອັນໜຶ່ງ ວິທີຈັບສະຫຼາກຊິ່ມບອກ ເປັນແນວໃດ?

ພິກຂຸຜູ້ໃຫ້ຈັບສະຫຼາກນັ້ນ ເພິ່ງຊິ່ມບອກທີ່ໃກ້ຫູຂອງພິກຂຸແຕ່ລະອົງ ໆ ວ່າ "ນີ້ສະຫຼາກຂອງຜູ້ກ່າວແນວນີ້ ນີ້ສະຫຼາກຂອງຜູ້ກ່າວແນວນີ້ ທ່ານຈົ່ງຈັບສະຫຼາກທີ່ພໍໃຈ" ເມື່ອພິກຂຸນັ້ນຈັບແລ້ວ ເພິ່ງແນະນຳວ່າ "ທ່ານຢ່າບອກແກ່ໃຜ ໆ" ຖ້າຮູ້ວ່າ "ອະທຳມະວາທີຫຼາຍກວ່າ" ເພິ່ງບອກວ່າ "ສະຫຼາກຈັບບໍ່ດີ" ແລ້ວໃຫ້ຈັບໃໝ່ ຖ້າຮູ້ວ່າ "ທຳມະວາທີຫຼາຍກວ່າ" ເພິ່ງປະກາດວ່າ "ສະຫຼາກຈັບດີແລ້ວ" ພິກຂຸທັງຫຼາຍ ວິທີຈັບສະຫຼາກ ຊິ່ມບອກເປັນແນວນີ້ແລ

ພິກຂຸທັງຫຼາຍ ອັນໜຶ່ງ ວິທີຈັບສະຫຼາກເປີດເຜີຍ ເປັນແນວໃດ?

ຖ້າຮູ້ວ່າທຳມະວາທີຫຼາຍກວ່າ ເພິ່ງໃຫ້ຈັບສະຫຼາກເປີດເຜີຍ ຢ່າງແຈ່ມແຈ້ງ ວິທີຈັບສະຫຼາກ ເປີດເຜີຍເປັນແນວນີ້ແລ

ພິກຂຸທັງຫຼາຍ ວິທີຈັບສະຫຼາກ ໓ ຢ່າງນີ້ແລ

## ສະຕິວິໄນ

## ອະນຸວາທາທິກອນລະງັບດ້ວຍສະມະຖະ ໔ ຢ່າງ

[໔໓໖] ອະນຸວາທາທິກອນຍ່ອມລະງັບດ້ວຍສະມະຖະທີ່ໃດ

ອະນຸວາທາທິກອນຍ່ອມລະງັບດ້ວຍສະມະຖະ ໔ ຄື

(໑) ສຳມຸຂາວິໄນ
(໒) ສະຕິວິໄນ
(໓) ອະມູລະຫະວິໄນ
(໔) ຕັດສະປາປິຍະສິກາ

ບາງເທື່ອອະນຸວາທາທິກອນບໍ່ອາໄສສະມະຖະ ໒ ຢ່າງ ຄື (໑) ອະມູລະຫະວິໄນ (໒) ຕັດສະປາປິຍະສິກາ ແຕ່ລະງັບດ້ວຍສະມະຖະ ໒ ຢ່າງ ຄື (໑) ສຳມຸຂາວິໄນ (໒) ສະຕິວິໄນ

ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸ ທັງຫຼາຍໃສ່ຄວາມພິກຂຸດ້ວຍສີລະວິບັດທີ່ບໍ່ມີມູນ ສົງເພິ່ງໃຫ້ສະຕິວິໄນແກ່ພິກຂຸນັ້ນ ຜູ້ເຖິງຄວາມໄພບູນແຫ່ງສະຕິຢູ່ແລ້ວ

## ວິທີໃຫ້ສະຕິວິໄນແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ສະຕິວິໄນແນວນີ້ ຄື ພິກຂຸນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ฯລฯ ກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ພິກຂຸທັງຫຼາຍໃສ່ຄວາມຂ້າພະເຈົ້າດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານຜູ້ຈະເລີນ ຂ້າພະເຈົ້ານັ້ນເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ฯລฯ
ເພິ່ງຂໍແມ່ນເທື່ອທີ ໓ ฯລฯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍໃສ່ຄວາມພິກຂຸຊື່ນີ້ ດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ ຖ້າສົງພ້ອມກັນແລ້ວເພິ່ງໃຫ້ສະຕິວິໄນແກ່ພິກຂຸຊື່ນີ້ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸທັງຫຼາຍໃສ່ຄວາມພິກຂຸຊື່ນີ້ ດ້ວຍສີລະວິບັດທີ່ບໍ່ມີມູນ ທ່ານເຖິງຄວາມໄພບູນແຫ່ງສະຕິແລ້ວ ຂໍສະຕິວິໄນກັບສົງ ສົງໃຫ້ສະຕິວິໄນ ແກ່ພິກຂຸຊື່ນີ້ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ສະຕິວິໄນແກ່ ພິກຂຸຊື່ນີ້ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ
ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ฯລฯ

ສະຕິວິໄນອັນສົງໃຫ້ແລ້ວແກ່ພິກຂຸຊື່ນີ້ ຜູ້ເຖິງຄວາມໄພບູນແຫ່ງສະຕິແລ້ວ ສົງເຫັນດ້ວຍຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້ ຯລຯ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ອະທິກອນລະງັບດ້ວຍອັນໃດ?

ດ້ວຍສຳມຸຂາວິໄນກັບສະຕິວິໄນ

ໃນສຳມຸຂາວິໄນນັ້ນມີອັນໃດແດ່?

ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນແນວໃດ?

ໂຈດແລະຈຳເລີຍທັງສອງຢູ່ພ້ອມໜ້າກັນ ນີ້ຊື່ວ່າຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນ

ໃນສະຕິວິໄນນັ້ນມີອັນໃດແດ່?

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳ ຄືສະຕິວິໄນອັນໃດ ນີ້ມີໃນສະຕິວິໄນນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຽນ ຕ້ອງອາບັດປາຈິດຕີທີ່ຕິຽນ

## ອະມູລະທະວິໄນ

[໔໓໗] ບາງເທື່ອອະນຸວາທາທິກອນບໍ່ອາໄສສະມະຖະ ໔ ຢ່າງ ຄື (໑) ສະຕິວິໄນ (໔) ຕັດສະປາປິຍະສິກາ ແຕ່ເພິ່ງລະງັບດ້ວຍສະມະຖະ ໔ ຢ່າງ ຄື (໑) ສຳມຸຂາວິໄນ (໔) ອະມູລະທະວິໄນ

ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸໃນທຳວິໄນນີ້ ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍຍ່ອມໂຈດດ້ວຍອາບັດທີ່ຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດແລ້ວວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ທ່ານກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ" ພິກຂຸ

ທັງຫຼາຍແມ່ນພິກຂຸນັ້ນກ່າວຢູ່ແບບນັ້ນ ກໍຍັງໂຈດພິກຂຸນັ້ນຢູ່ຄືເກົ່າວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້

## ຄຳຂໍອະມູລະຫະວິໄນແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງໃຫ້ອະມູລະຫະວິໄນແກ່ພິກຂຸນັ້ນ ຜູ້ຫາຍຫຼົງແລ້ວ ກໍແລ ສົງເພິ່ງໃຫ້ ອະມູລະຫະວິໄນແບບນີ້

ພິກຂຸນັ້ນເພິ່ງເຂົ້າໄປຫາສົງຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ฯລฯ ແລ້ວກ່າວຄຳຂໍວ່າ

ທ່ານຜູ້ຈະເລີນ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງ ຫຼາຍໂຈດຂ້ານ້ອຍ ດ້ວຍອາບັດທີ່ຂ້ານ້ອຍຜູ້ວິກົນຈະລິດ ມີຈິດປັ່ນປ່ວນ ປະພຶດລະເມີດແລ້ວວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ຂ້ານ້ອຍຜູ້ກ່າວກັບພິກຂຸ ພວກນັ້ນແບບນີ້ ວ່າ "ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມ ເຮັດດ້ວຍກາຍ ຂ້ານ້ອຍ ຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ" ພິກຂຸທັງຫຼາຍ ແມ່ນຂ້ານ້ອຍກ່າວຢູ່ແບບ ນີ້ ກໍຍັງໂຈດຂ້ານ້ອຍຢູ່ຄືເກົ່າວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງ ຣະນຶກອາບັດເຫັນປານນີ້" ທ່ານຜູ້ ຈະເລີນ ຂ້ານ້ອຍນັ້ນຫາຍຫຼົງແລ້ວ ຂໍອະມູລະຫະວິໄນກັບສົງ

ເພິ່ງຂໍແມ່ນເທື່ອທີ ໒ ฯລฯ
ເພິ່ງຂໍແມ່ນເທື່ອທີ ໓ ฯລฯ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະ ພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດພິກຂຸນັ້ນດ້ວຍອາບັດທີ່ທ່ານຜູ້ວິກົນຈະລິດ ມີຈິດ ປັ່ນປ່ວນ ໄດ້ປະພຶດລະເມີດແລ້ວວ່າ ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້ ທ່ານ ກ່າວແບບນີ້ວ່າ "ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນ ກ່າວຢູ່ແບບນັ້ນ ກໍຍັງໂຈດພິກຂຸນັ້ນຢູ່ຄືເກົ່າວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນ ປານນີ້" ພິກຂຸນັ້ນຫາຍຫຼົງແລ້ວ ຂໍອະມູລະຫະວິໄນກັບສົງ ຖ້າສົງພ້ອມກັນແລ້ວ ສົງເພິ່ງໃຫ້ອະມູ ລະຫະວິໄນແກ່ພິກຂຸນັ້ນຜູ້ຫາຍຫຼົງແລ້ວ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ພິກຂຸທັງຫຼາຍໂຈດພິກຂຸນັ້ນດ້ວຍອາບັດທີ່ພິກຂຸນັ້ນຜູ້ວິກົນຈະລິດ ມີຈິດປັ່ນປ່ວນປະພຶດລະເມີດແລ້ວວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດເຫັນປານນີ້" ທ່ານກ່າວແນວນີ້ວ່າ "ທ່ານທັງຫຼາຍ ຂ້ານ້ອຍວິກົນຈະລິດ ມີຈິດປັ່ນປ່ວນ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຂ້ານ້ອຍຣະນຶກອາບັດນັ້ນບໍ່ໄດ້ ຂ້ານ້ອຍຫຼົງໄດ້ເຮັດສິ່ງນີ້ແລ້ວ" ພິກຂຸທັງຫຼາຍ ແມ່ນພິກຂຸນັ້ນກ່າວຢູ່ແນວນັ້ນ ກໍຍັງໂຈດທ່ານຢູ່ຄືເກົ່າວ່າ "ທ່ານຕ້ອງອາບັດແລ້ວ ຈົ່ງຣະນຶກອາບັດປານນີ້ ທ່ານຫາຍຫຼົງແລ້ວຂໍອະມູລະຫະວິໄນກັບສົງ ສົງໃຫ້ອະມູລະຫະວິໄນແກ່ພິກຂຸຊື່ນີ້ ຜູ້ຫາຍຫຼົງແລ້ວ ທ່ານອົງໃດເຫັນດ້ວຍກັບການໃຫ້ອະມູລະຫະວິໄນແກ່ພິກຂຸຊື່ນີ້ ຜູ້ຫາຍຫຼົງແລ້ວ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ
ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ອະມູລະຫະວິໄນສົງໃຫ້ແລ້ວແກ່ພິກຂຸຊື່ນີ້ຜູ້ຫາຍຫຼົງແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ພິກຂຸທັງຫຼາຍ ນີ້ຮຽກວ່າອະທິກອນລະງັບແລ້ວ ລະງັບດ້ວຍອັນໃດ ດ້ວຍສຳມຸຂາວິໄນກັບອະມູລະຫະວິໄນ

ໃນສຳມຸຂາວິໄນນັ້ນມີອັນໃດແດ່ ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ໃນອະມູລະຫະວິໄນນັ້ນ ມີອັນໃດແດ່

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳ ຄື ອະມູລະຫະວິໄນອັນໃດ ນີ້ມີໃນອະມູລະຫະວິໄນນັ້ນ

ພິກຂຸທັງຫຼາຍ ອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕີທີ່ຕິຕຽນ

## ຕັດສະປາປິຍະສິກາວິໄນ

[໒໓໘] ບາງເທື່ອ ອະນຸວາທາທິກອນບໍ່ອາໄສສະມະຖະ ໒ ຢ່າງ ຄື (໑) ສະຕິວິໄນ (໒) ອະມູລະຫະວິໄນ ແຕ່ເພິ່ງລະງັບດ້ວຍສະມະຖະ ໒ ຢ່າງ ຄື (໑) ສຳມຸຂາວິໄນ (໒) ຕັດສະປາປິຍະສິກາ ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ໂຈດພິກຂຸດ້ວຍຄະຣຸກາບັດ (ອາບັດໜັກ) ໃນທ່າມກາງສົງວ່າ "ທ່ານຕ້ອງຄະຣຸກາບັດ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກແລ້ວ ຈົ່ງຣະນຶກອາບັດເຫັນປານນີ້"

ພິກຂຸຈຳເລີຍນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍນຶກບໍ່ໄດ້ເລີຍວ່າ ຕ້ອງຄະຣຸກາບັດເຫັນປານນີ້ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ

ພິກຂຸຜູ້ເປັນໂຈດນັ້ນ ຍ່ອມຄາດຄັ້ນພິກຂຸຈຳເລີຍນັ້ນຜູ້ເປື້ອງຕົນຢູ່ວ່າ "ຖ້າຈັ່ງຊັ້ນ ທ່ານ ຈົ່ງຮູ້ດ້ວຍດີ ຖ້າທ່ານຣະນຶກໄດ້ວ່າຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼືອາບັດ ທີ່ໃກ້ປາຣາຊິກແລ້ວ

ພິກຂຸຈຳເລີຍນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍນຶກບໍ່ໄດ້ວ່າ ຕ້ອງຄະຣຸກາບັດປານນີ້ ຄືອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ ແຕ່ຣະນຶກໄດ້ວ່າ ຕ້ອງອາບັດແມ່ນເລັກໜ້ອຍ ປານນີ້

ພິກຂຸຜູ້ເປັນໂຈດນັ້ນ ຍ່ອມຄາດຄັ້ນພິກຂຸຈຳເລີຍນັ້ນຜູ້ເປື້ອງຕົນຢູ່ວ່າ "ຖ້າຈັ່ງຊັ້ນ ທ່ານ ຈົ່ງຮູ້ດ້ວຍດີ ຖ້າທ່ານຣະນຶກໄດ້ວ່າ ຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼື ອາບັດທີ່ໃກ້ປາຣາຊິກ

ພິກຂຸຈຳເລີຍນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍຕ້ອງອາບັດເລັກໜ້ອຍຊື່ນີ້ ຂ້ານ້ອຍບໍ່ຖືກຖາມກໍປະຕິຍານ ຂ້ານ້ອຍຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກຫຼືອາບັດທີ່ໃກ້ປາຣາຊິກ ຂ້ານ້ອຍຖືກຖາມແລ້ວຈັກບໍ່ປະຕິຍານບໍ

ພິກຂຸຜູ້ເປັນໂຈດນັ້ນກ່າວແນວນີ້ວ່າ "ທ່ານ ອັນໜຶ່ງ ທ່ານຕ້ອງອາບັດແມ່ນເລັກໜ້ອຍຂໍ້ນີ້ ທ່ານບໍ່ຖືກຖາມແລ້ວຈັກບໍ່ປະຕິຍານ ທ່ານຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ ທ່ານບໍ່ຖືກຖາມແລ້ວຈັກປະຕິຍານບໍ ຖ້າຈັ່ງຊັ້ນ ທ່ານຈົ່ງຮູ້ດ້ວຍດີ ຖ້າທ່ານຣະນຶກໄດ້ວ່າ ຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ

ພິກຂຸຈຳເລີຍນັ້ນກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍນຶກໄດ້ວ່າ ຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ ຄຳນັ້ນຂ້ານ້ອຍເວົ້າຫຼິ້ນ ຄຳນັ້ນຂ້ານ້ອຍເວົ້າໄລເລໄປ ຂ້ານ້ອຍນຶກບໍ່ໄດ້ວ່າ ຕ້ອງຄະຣຸກາບັດປານນີ້ ຄື ອາບັດປາຣາຊິກ ຫຼືອາບັດທີ່ໃກ້ປາຣາຊິກ

ພິກຂຸທັງຫຼາຍ ສົງເພິ່ງລົງຕັດສະປາປິຍະສິກາກຳນັ້ນແກ່ພິກຂຸນັ້ນແລ

## ວິທີລົງຕັດສະປາປິຍະສິກາກຳແລະກຳມະວາຈາ

ພິກຂຸທັງຫຼາຍ ອັນໜຶ່ງ ສົງເພິ່ງລົງຕັດສະປາປິຍະສິກາກຳແນວນີ້ ຄື ພິກຂຸຜູ້ສະຫຼາດ ຜູ້ສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິຈະຕຸດຖະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຖືກຊັກຖາມເຖິງຄະຣຸກາບັດໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ຖ້າສົງພ້ອມກັນແລ້ວ ສົງເພິ່ງລົງຕັດສະປາປິຍະສິກາກຳແກ່ ພິກຂຸຊື່ນີ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຖືກຊັກຖາມເຖິງຄະຣຸກາບັດໃນທ່າມກາງສົງ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ ເອົາເລື້ອງໜຶ່ງມາກ່າວປົກປິດອີກເລື້ອງໜຶ່ງ ກ່າວຕົວະທັງທີ່ຮູ້ ສົງລົງຕັດສະປາປິຍະສິກາກຳແກ່ພິກຂຸຊື່ນີ້ແລ້ວ ທ່ານອົງໃດເຫັນດ້ວຍກັບການລົງຕັດສະປາປິຍະສິກາກຳແກ່ພິກຂຸຊື່ນີ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ແມ່ນເທື່ອທີ ໒ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ
ແມ່ນເທື່ອທີ ໓ ຂ້າພະເຈົ້າກ່າວຄວາມນີ້ວ່າ ຯລຯ

ຕັດສະປາປິຍະສິກາກຳ ສົງລົງແລ້ວແກ່ພິກຂຸມີຊື່ນີ້ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະທິກອນລະງັບແລ້ວ

ລະງັບດ້ວຍອັນໃດ ດ້ວຍສຳມຸຂາວິໄນກັບຕັດສະປາປິຍະສິກາ

ໃນສຳມຸຂາວິໄນນັ້ນມີອັນໃດແດ່ ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ໃນຕັດສະປາປິຍະສິການັ້ນມີອັນໃດແດ່?

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳຄືຕັດສະປາປິຍະສິກາອັນໃດ ນີ້ມີໃນຕັດສະປາປິຍະສິການັ້ນ

ພິກຂຸທັງຫຼາຍ ຫາກອະທິກອນລະງັບແລ້ວແນວນີ້ ຜູ້ເຮັດຮື້ຟື້ນ ຕ້ອງອາບັດປາຈິດຕິ ທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕິທີ່ຕິຕຽນ

## ປະຕິນຍາຕະກະຣະນະ

## ອາປັດຕາທິກອນລະງັບດ້ວຍສະມະຖະ ໓ ຢ່າງ

[໒໓໙] ອາປັດຕາທິກອນ ລະງັບດ້ວຍສະມະຖະທີ່ໃດ ອາປັດຕາທິກອນລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ

ບາງເທື່ອອາບັດຕາທິກອນ ບໍ່ອາໄສສະມະຖະແນວໜຶ່ງ ຄື ຕິນະວັດຖາຣະກະ ເພິ່ງລະງັບດ້ວຍສະມະຖະ ๒ ຢ່າງ ຄື (໑) ສຳມຸຂາວິໄນ (๒) ປະຕິນຍາຕະກະຣະນະ ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ຕ້ອງລະຫຸກາບັດແລ້ວ ທ່ານເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ

ນັ່ງຢ່ອງຢໍ້ ປະນົມມື ແລ້ວກ່າວແນວນີ້ວ່າ "ທ່ານ ຂ້ານ້ອຍຕ້ອງອາບັດຊື່ນີ້ ຂ້ານ້ອຍສະແດງຄືນອາບັດນັ້ນ

ພິກຂຸຜູ້ຮັບນັ້ນເພິ່ງກ່າວວ່າ "ທ່ານເຫັນບໍ"

ພິກຂຸຜູ້ສະແດງນັ້ນເພິ່ງກ່າວວ່າ "ໂດຍ ຂ້ານ້ອຍເຫັນ"

ພິກຂຸຜູ້ຮັບນັ້ນເພິ່ງກ່າວວ່າ "ທ່ານເພິ່ງສັງລວມຕໍ່ໄປ"

ພິກຂຸທັງຫຼາຍ ນີ້ຮຽກວ່າອະທິກອນລະງັບແລ້ວ

ລະງັບດ້ວຍອັນໃດ ດ້ວຍສຳມຸຂາວິໄນກັບປະຕິນຍາຕະກະຣະນະ

ໃນສຳມຸຂາວິໄນນັ້ນມີອັນໃດແດ່ ມີຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນແນວໃດ ຄື ຜູ້ສະແດງກັບຜູ້ຮັບ ສະແດງທັງສອງຢູ່ພ້ອມໜ້າກັນ ນີ້ຊື່ວ່າ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນ ໃນປະຕິນຍາຕະກະຣະນະນັ້ນ ມີອັນໃດແດ່?

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳຄືປະຕິນຍາຕະກະຣະນະອັນໃດ ນີ້ມີໃນປະຕິນຍາຕະກະຣະນະນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ຮັບຮື້ຟື້ນ ຕ້ອງອາບັດປາຈິດຕິ ທີ່ຮື້ຟື້ນ ຖ້າໄດ້ການສະແດງນັ້ນແນວນີ້ ນັ້ນເປັນຄວາມດີ ຫາກບໍ່ໄດ້ ພິກຂຸນັ້ນເພິ່ງເຂົ້າໄປຫາພິກຂຸຫຼາຍອົງນຳກັນ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າຕ້ອງອາບັດຊື່ນີ້ ຂ້າພະເຈົ້າສະແດງຄືນອາບັດນັ້ນ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ພິກຂຸພວກນັ້ນຮູ້ດ້ວຍຍັດຕິວ່າ "ຂໍທ່ານ ທັງຫຼາຍຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຣະນຶກ ເປີດເຜີຍ ເຮັດໃຫ້ຕື້ນ ສະແດງອາບັດ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ຂ້າພະເຈົ້າເພິ່ງຮັບອາບັດຂອງພິກຂຸຊື່ນີ້ແລ້ວ ເພິ່ງກ່າວວ່າ "ທ່ານເຫັນບໍ

ພິກຂຸຜູ້ສະແດງເພິ່ງກ່າວວ່າ "ໂດຍ ຂ້ານ້ອຍເຫັນ

ພິກຂຸຜູ້ຮັບເພິ່ງກ່າວວ່າ "ທ່ານເພິ່ງສັງລວມຕໍ່ໄປ

ພິກຂຸທັງຫຼາຍ ນີ້ຮຽກວ່າອະທິກອນລະງັບແລ້ວ ລະງັບດ້ວຍອັນໃດ ດ້ວຍສຳມຸຂາວິໄນກັບປະຕິນຍາຕະກະຣະນະ ໃນສຳມຸຂາວິໄນນັ້ນ ມີອັນໃດແດ່ ມີຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນແນວໃດ ຄື ຜູ້ສະແດງກັບຜູ້ຮັບສະແດງ ທັງສອງຢູ່ພ້ອມໜ້າກັນ ນີ້ຊື່ວ່າ ຄວາມພ້ອມໜ້າບຸກຄົນ ໃນສຳມຸຂາວິໄນນັ້ນ ໃນປະຕິນຍາຕະກະຣະນະນັ້ນ ມີອັນໃດແດ່ ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳຄືປະຕິນຍາຕະກະຣະນະອັນໃດ ນີ້ມີໃນປະຕິນຍາຕະກະຣະນະນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ຮັບຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຖ້າໄດ້ການສະແດງນັ້ນແນວນີ້ ນັ້ນເປັນຄວາມດີ ຫາກບໍ່ໄດ້ ພິກຂຸນັ້ນເພິ່ງເຂົ້າໄປຫາສົງ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ຂາບຕີນພິກຂຸຜູ້ແກ່ພັນສາທັງຫຼາຍ ນັ່ງຢ່ອງຢໍ້ ປະນົມມື ແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ຂ້ານ້ອຍຕ້ອງອາບັດຊື່ນີ້ ຂ້ານ້ອຍສະແດງຄືນອາບັດນັ້ນ

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳວ່າ "ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ອົງນີ້ ຣະນຶກ ເປີດເຜີຍ ເຮັດໃຫ້ຕື້ນ ສະແດງອາບັດ ຖ້າສົງ ພ້ອມກັນແລ້ວ ຂ້າພະເຈົ້າເພິ່ງຮັບອາບັດຂອງພິກຂຸຊື່ນີ້" ແລ້ວເພິ່ງກ່າວວ່າ "ທ່ານເຫັນບໍ

ພິກຂຸຜູ້ສະແດງເພິ່ງກ່າວວ່າ "ໂດຍ ຂ້ານ້ອຍເຫັນ"
ພິກຂຸຜູ້ຮັບເພິ່ງກ່າວວ່າ "ທ່ານເພິ່ງສັງລວມຕໍ່ໄປ"

ພິກຂຸທັງຫຼາຍ ນີ້ຮຽກວ່າອະທິກອນລະງັບແລ້ວ ລະງັບດ້ວຍອັນໃດ ດ້ວຍສຳມຸຂາວິໄນກັບປະຕິນຍາຕະກະຣະນະ ໃນສຳມຸຂາວິໄນນັ້ນ ມີອັນໃດແດ່ ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ ຯລຯ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ຮັບຮື້ຟື້ນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕີທີ່ຕິຕຽນ

## ຕິນະວັດຖາຣະກະ

[໔໔໐] ບາງເທື່ອອາບັດຕາທິກອນບໍ່ອາໄສສະມະຖະແນວໜຶ່ງ ຄື ປະຕິນຍາຕະກະຣະນະ ເພິ່ງລະງັບດ້ວຍສະມະຖະ ໔ ຢ່າງ ຄື (໑) ສຳມຸຂາວິໄນ (໔) ຕິນະວັດຖາຣະກະ ບາງເທື່ອເພິ່ງຕົກລົງກັນໄດ້ ສົມຈິງດັ່ງທີ່ຕັດໄວ້ວ່າ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພວກພິກຂຸໝາງໃຈ ຜິດຖຽງ ວິວາດກັນຢູ່ ປະພຶດລະເມີດສິ່ງທີ່ບໍ່ຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກພິກຂຸໃນໝູ່ນັ້ນເປີກສາກັນແນວນີ້ວ່າ "ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະ ເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງເປັນໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນ ກໍໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລະງັບອະທິກອນເຫັນປານນີ້ດ້ວຍຕິນະວັດຖາຣະກະ

## ວິທີລະງັບອະທິກອນດ້ວຍຕິນະວັດຖາຣະກະແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງລະງັບອະທິກອນແນວນີ້ ຄື ພິກຂຸທຸກ ໆ ອົງເພິ່ງປະຊຸມໃນບ່ອນແຫ່ງດຽວກັນ ບັດແລ້ວພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມກັນແລ້ວ ສົງເພິ່ງລະງັບອະທິກອນນີ້ດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລຶຫັດ

ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ຝ່າຍຂອງຕົນຮູ້ດ້ວຍຍັດຕິກຳມະວາຈາວ່າ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມ ເຮັດດ້ວຍກາຍ ຖ້າພວກເຮົາຈັກປັບກັນດ້ວຍອາບັດເຫຼົ່ານີ້ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານທັງຫຼາຍແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລຶຫັດ ເພື່ອປະໂຫຍດແກ່ທ່ານທັງຫຼາຍ ແລະເພື່ອປະໂຫຍດແກ່ຕົນ

[໔໔໑] ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນອີກພວກໜຶ່ງ ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ຝ່າຍຂອງຕົນຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນ ຈະເພິ່ງເປັນໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າທ່ານທັງຫຼາຍພ້ອມກັນແລ້ວ ຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານທັງຫຼາຍ ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານທັງຫຼາຍ ແລະເພື່ອປະໂຫຍດແກ່ຕົນ

[໔໔໔] ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນ ອີກພວກໜຶ່ງ ພິກຂຸຜູ້ສະຫຼາດສາມາດ ເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງລຸກລາມໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຖ້າສົງພ້ອມກັນແລ້ວຂ້າພະເຈົ້າເພິ່ງສະແດງອາບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານທັງຫຼາຍແລະເພື່ອປະໂຫຍດແກ່ຕົນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພວກເຮົາໝາງໃຈ ຜິດຖຽງ ວິວາດກັນຢູ່ ໄດ້ປະພຶດລະເມີດສິ່ງທີ່ບໍ່ສົມຄວນແກ່ສະມະນະເປັນອາຈິນຫຼວງຫຼາຍ ທັງທີ່ກ່າວດ້ວຍວາຈາແລະພະຍາຍາມເຮັດດ້ວຍກາຍ ຖ້າພວກເຮົາຈັກປັບອາບັດເຫຼົ່ານີ້ກັນແລະກັນ ບາງເທື່ອອະທິກອນນັ້ນຈະເພິ່ງເປັນໄປເພື່ອຄວາມຮຸນແຮງ ເພື່ອຄວາມດຸຮ້າຍ ເພື່ອຄວາມແຕກກັນກໍໄດ້ ຂ້າພະເຈົ້າສະແດງອາບັດຂອງທ່ານເຫຼົ່ານີ້ແລະອາບັດຂອງຕົນໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລິຫັດ ເພື່ອປະໂຫຍດແກ່ທ່ານເຫຼົ່ານີ້ແລະເພື່ອປະໂຫຍດແກ່ຕົນ ທ່ານອົງໃດເຫັນດ້ວຍກັບການສະແດງອາບັດເຫຼົ່ານີ້ຂອງພວກເຮົາໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລິຫັດ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ອາບັດເຫຼົ່ານີ້ຂອງພວກເຮົາ ເວັ້ນອາບັດທີ່ມີໂທດຫຍາບ ເວັ້ນອາບັດທີ່ເນື່ອງດ້ວຍຄະລິຫັດຂ້າພະເຈົ້າສະແດງແລ້ວໃນທ່າມກາງສົງດ້ວຍຕິນະວັດຖາຣະກະ ສົງເຫັນດ້ວຍຍ້ອນແນວນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ລຳດັບນັ້ນ ບັນດາພິກຂຸຝ່າຍດຽວກັນ ອີກພວກໜຶ່ງ ຯລຯ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າອະທິກອນລະງັບແລ້ວ ລະງັບດ້ວຍອັນໃດ ລະງັບດ້ວຍສຳມຸຂາວິໄນກັບຕິນະວັດຖາຣະກະ

ໃນສຳມຸຂາວິໄນນັ້ນມີອັນໃດແດ່ ມີຄວາມພ້ອມໜ້າສົງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ຄວາມພ້ອມໜ້າບຸກຄົນ

ອັນໜຶ່ງ ຄວາມພ້ອມໜ້າສົງໃນສຳມຸຂາວິໄນນັ້ນແນວໃດ?

ພິກຂຸຜູ້ເຂົ້າກຳມີຈຳນວນທໍ່ໃດ ພິກຂຸເຫຼົ່ານັ້ນມາປະຊຸມກັນ ນຳສັນທະຂອງຜູ້ຄວນສັນທະມາ ຜູ້ຢູ່ພ້ອມໜ້າກັນບໍ່ຄັດຄ້ານ ນີ້ຊື່ວ່າຄວາມພ້ອມໜ້າສົງ ໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນ ໃນສຳມຸຂາວິໄນນັ້ນແນວໃດ?

ອະທິກອນນັ້ນລະງັບໂດຍທຳ ໂດຍວິໄນ ແລະໂດຍສັດຖຸສາດໃດ ນີ້ຊື່ວ່າຄວາມພ້ອມໜ້າທຳ ຄວາມພ້ອມໜ້າວິໄນໃນສຳມຸຂາວິໄນນັ້ນ

ອັນໜຶ່ງ ຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນັ້ນແນວໃດ?

ຜູ້ສະແດງແລະຜູ້ຮັບສະແດງທັງສອງຢູ່ພ້ອມໜ້າກັນ ນີ້ຊື່ວ່າຄວາມພ້ອມໜ້າບຸກຄົນໃນສຳມຸຂາວິໄນນີ້

ໃນຕິນະວັດຖາຣະກະນັ້ນ ມີອັນໃດແດ່?

ມີກິຣິຍາ ຄວາມກະທຳ ຄວາມເຂົ້າໄປ ຄວາມເຂົ້າໄປສະເພາະ ຄວາມຮັບຮອງ ຄວາມບໍ່ຄັດຄ້ານກຳຄືຕິນະວັດຖາຣະກະອັນໃດ ນີ້ມີໃນຕິນະວັດຖາຣະກະນັ້ນ

ພິກຂຸທັງຫຼາຍ ຖ້າອະທິກອນລະງັບແລ້ວແນວນີ້ ຜູ້ຮັບຮື້ຟື້ນ ຕ້ອງອາບັດປາຈິດຕິ ທີ່ຮື້ຟື້ນ ຜູ້ໃຫ້ສັນທະຕິຕຽນ ຕ້ອງອາບັດປາຈິດຕິທີ່ຕິຕຽນ

ກິດຈາທິກອນລະງັບດ້ວຍສະມະຖະທໍ່ໃດ?

ກິດຈາທິກອນລະງັບດ້ວຍສະມະຖະແນວດຽວ ຄື ສຳມຸຂາວິໄນ

**ອະທິກະຣະນະວູປະສະມະນະສະມະຖະ ຈົບ**

**ສະມະຖະຂັນທະກະທີ ໔ ຈົບ**